# ປຶ້ມພຣະໄຕຣປິດົກພາສາລາວ

ແປຈາກປຶ້ມຂອງ ມຫາຈຸລາລົງກອນຣາຊວິທຍາລັຍ ໂດຍ ສົມສັກ ວົງວານິດ

ສະບັບພາສາລາວ ສະກົດຕາມສຽງ ຕາມຫຼັກໄວຍາກອນ ຣາຊບັນດິດສະພາລາວ, ໑໙໗໑

ວິນັຍປິດົກ




ພິກຂຸນີວິພັງຄ໌

# Tripitaka in Lao language Book 3

Translated in Lao by Somsak Chuck Vongvanith
from the Thai Tripitaka of MahaJuralonkorn Rajvithayalay
Written according to the Rajbandit Sapha Lao Grammar, 1971

San Marcos, California, USA - April 2020

# ພຣະໄຕຣປິດົກພາສາລາວ ເຫລັ້ມທີ ໓

ແປແລະຮຽບຮຽງຈາກ ສະບັບມຫາຈຸຬາລົງກອນຣາຊວິທຍາລັຍ (ປົກສີຟ້າ)

ໂດຍ ສົມສັກ ວົງວານິດ

Tripitaka Book 3, Book of Buddhism translated from Thai to Lao

in Lao Grammar of Rajbandit Sapha Lao, 1971

by Somsak Chuck Vongvanith

❀❀❀❀❀❀❀❀❀❀❀❀❀❀❀

**ພຣະໄຕຣປິດົກເຫລັ້ມທີ ໐໓ ວິນັຍປິດົກທີ ໐໓ ພິກຂຸນີວິພັງຄ໌**

**ສະບັບພາສາລາວ ສະກົດຕາມສຽງ ຕາມຫລັກໄວຍາກອນ ຂອງ**

**ສະພາຣາຊບັນດິດລາວ, ຣັຖບານລາວ ປີ ໑໙໗໑**

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນຫ໌] ປາຣາຊິກສິກຂາບົດທີ ໑ ນິທານວັຕຖຸ**
**ພຣະວິນັຍປິດົກ**
**ພິກຂຸນີວິພັງຄ໌**

□ ❀❀❀ □

*ຂໍນອບນ້ອມພຣະຜູ້ມີພຣະພາກອະຣະຫັນຕະສັມມາສັມພຸດທະເຈົ້າພຣະອົງຄ໌ນັ້ນ*

## ໑. ປາຣາຊິກກັນ຺ຫ໌

### ປາຣາຊິກສິກຂາ ບົດທີ ໑ (໑)

### ວ່າດ້ວຍການຍິນດີການຈັບຕ້ອງທີ່ບໍຣິເວນ຺ເຫນືອເຂົ່າຂຶ້ນໄປຂອງຊາຍ

### ເຣື້ອງພິກສຸນີສຸນທຣີນັນທາ

[໖໕໖] ສ຺ມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນ຺ະ ພຣະເຊຕວັນ ອາຣາມຂອງອນາຖປິນ຺ທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ນາຍສາຣ຺ຫະຫລານຂອງນາງວິສາຂາມິຄາຣມາຕາ໔ ປະສົງຄ໌ຈະສ້າງວິຫານຖວາຍພິກສຸນີສົງຂ໌ ນາຍສາຣ຺ຫະຫລານຂອງນາງວິສາຂາມິຄາຣມາຕາຈຶ່ງເຂົ້າໄປແຈ້ງຄວາມປະສົງຄ໌ແກ່ພິກສຸນີວ່າ "ຜູ້ຂ້າຕ້ອງການຈະສ້າງວິຫານຖວາຍພິກສຸນີສົງຂ໌ ທ່ານທັງຫລາຍໂປຣດໃຫ້ພິກສຸນີຜູ້ເບິ່ງແຍງການກໍ່ສ້າງຈັກ ໑ ຮູບເຖີດ"

**ໝາຍເຫດ :**

໑ ຖ້ານັບຮວມກັບສາທາຣະນະບັນຍັດຄືທີ່ພິກສຸຕ້ອງຮັກສາດ້ວຍສິກຂາບົທນີ້ຈັດເປັນສິກຂາບົດທີ ໕

໔ ຄຳວ່າ "ມິຄາຣນຕຸຕາ" ແປໄດ້ ໔ ນັຍ ໃນທີ່ນີ້ແປວ່າ ຫລານຂອງນາງວິສາຂາມິຄາຣມາຕາຕາມອະທິບາຍ (ວິ. ອ. ໔/໖໕໖/໔໖໔, ສາຣຕຸຖ. ຕີກາ ໓/໖໕໖/໑໓໗) ສ່ວນໃນພຣະສຸຕຕັນຕປິດົກແປວ່າ ຫລານຂອງມິຄາຣເສດຖີ (ອງ. ຕິກ. ໔໐/໖໗/໑໗໘) ຕາມອະທິບາຍ (ອງ. ຕິກ. ອ. ໔/໖໗/໔໐໔)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນ຺ຫ໌] ປາຣາຊິກສິກຂາບົດທີ ໑ ນິທານວັຕຖຸ

ສ຺ມັຍນັ້ນ ມີຍິງສາວ ໔ ຄົນພີ່ນ້ອງບວດຢູ່ໃນສຳນັກພິກສຸນີ ຄືນັນທາ ນັນທະວະດີ ສຸນທຣີນັນທາ ຖຸລລະນັນທາ ໃນຈຳນວນ ໔ ຮູບນີ້ ພິກສຸນີສຸນທຣີນັນທາບວດຕັ້ງແຕ່ວັຍສາວ ມີຮູບງາມຫນ້າເບິ່ງຫນ້າຊົມ ເປັນບັນ຺ທິຕ ສລຽວສລາດ ມີປັນຍາ ດຸຫມັ່ນ ບໍ່ກຽດຄ້ານ ປະກອບດ້ວຍປັນຍາໄຕ່ຕອງໃນວຽກງານຕ່າງໆ ສາມາດກະທຳ ສາມາດຈັດແຈງໄດ້ ພິກສຸນີສົງຂ໌ຈຶ່ງແຕ່ງຕັ້ງພິກສຸນີສຸນທຣີນັນທາ ໃຫ້ເປັນຜູ້ເບິ່ງແຍງການກໍ່ສ້າງຂອງນາຍສາຣ຺ຫະ ຫລານຂອງນາງວິສາຂາມິຄາຣມາຕາ ຄັ້ງນັ້ນພິກສຸນີສຸນທຣີນັນທານັ້ນໄປບ້ານນາຍສາຣ຺ຫະ ຫລານຂອງນາງວິສາຂາມິຄາຣມາຕາ ເນືອງໆ ບອກວ່າ "ທ່ານຈົ່ງໃຫ້ມີດ ຈົ່ງໃຫ້ຂວານ ຈົ່ງໃຫ້ຊ້ອນ ຈົ່ງໃຫ້ຈົກ ຈົ່ງໃຫ້ສິ່ວ" ຝ່າຍນາຍສາຣ຺ຫະຫລານຂອງນາງວິສາຂາມິຄາຣມາຕາກໍຫມັ່ນໄປສຳນັກພິກສຸນີຢູ່ເນືອງໆ ເພື່ອໃຫ້ຮູ້ງານທີ່ທຳແລ້ວ

ແລະຍັງບໍ່ໄດ້ທຳ ຄົນທັງສອງນັ້ນມີຈິດຮັກໃຄ່ຕໍ່ກັນເພາະພົບເຫັນກັນເນືອງໆ ນາຍສາຣະຫະຫລານຂອງນາງວິສາຂາມິຄາຣມາຕາ ເມື່ອບໍ່ໄດ້ໂອກາສທີ່ຈະເຮັດມິດີມິຮ້າຍພິກສຸນີສຸນທຣີນັນທາ ຈຶ່ງໄດ້ຈັດຕຽມພັຕຕາຫາຣສຳລັບຖວາຍພິກສຸນີສົງຂ໌ ເພື່ອຫາທາງທີ່ຈະປະທຸສຮ້າຍນາງນັ້ນ ເມື່ອຈະປູອາສນະໃນໂຮງສັນ ໄດ້ປູອາສນະໄວ້ນະສ່ວນຂ້າງນຶ່ງ ດ້ວຍຄິດວ່າ "ພິກສຸນີຈຳນວນເທົ່ານີ້ມີພັນສາແກ່ກວ່າແມ່ເຈົ້າສຸນທຣີນັນທາ" ປູອາສນະໄວ້ ນະສ່ວນຂ້າງນຶ່ງດ້ວຍຄິດວ່າ "ພິກສຸນີຈຳນວນເທົ່ານີ້ມີພັນສາອ່ອນກວ່າ" ປູອາສນະໄວ້ສຳລັບພິກສຸນີສຸນທຣີນັນທາ ນະສ່ວນອີກຂ້າງນຶ່ງ ໃນທີ່ມິດຊິດມີທີ່ກຳບັງເພື່ອໃຫ້ພິກສຸນີຜູ້ເປັນເຖຣະເຂົ້າໃຈວ່າ "ພິກສຸນີສຸນທຣີນັນທານັ່ງຢູ່ກັບພວກພິກສຸນີນວກະ" ແມ່ນພິກສຸນີນວກະກໍຈະເຂົ້າໃຈໄປວ່າ "ພິກສຸນີສຸນທຣີນັນທານັ່ງຢູ່ກັບພວກພິກສຸນີຜູ້ເປັນເຖຣະ" ຄັນແລ້ວນາຍສາຣະຫະຫລານຂອງນາງວິສາຂາມິຄາຣມາຕາຈຶ່ງໃຫ້ຄົນໄປຮຽນພິກສຸນີສົງຂ໌ວ່າ "ແມ່ເຈົ້າ ໄດ້ເວລາແລ້ວ ພັຕຕາຫາຣເສັດແລ້ວ" ພິກສຸນີສຸນທຣີນັນທາສັງເກຕຮູ້ວ່າ "ນາຍສາຣະຫະຫລານຂອງນາງວິສາຂາມິຄາຣມາຕາຕຽມກາຣໄວ້ມາກ ບໍ່ແມ່ນພຽງຈັດພັຕຕາຫາຣຖວາຍພິກສຸນີສົງຂ໌ເທົ່ານັ້ນ ແຕ່ປະສົງຄ໌ທີ່ຈະເຮັດມິດີມິຮ້າຍເຮົາ ຖ້າເຮົາໄປກໍຕ້ອງມີເຣື້ອງນອງນັນແນ່" ຈຶ່ງສັ່ງພິກສຸນີອັນເຕວາສີນີໄປວ່າ "ທ່ານຈົ່ງໄປນຳບິນທບາຕມາໃຫ້ເຮົາ ຖ້າມີຜູ້ຖາມເຖິງເຮົາ ຈົ່ງຕອບວ່າເຮົາເປັນໄຂ້" ພິກສຸນີນັ້ນປະຕິບັດຕາມຄຳສັ່ງຂອງພິກສຸນີສຸນທຣີນັນທາ ເວລານັ້ນ ນາຍສາຣະຫະຫລານຂອງນາງວິສາຂາມິຄາຣມາຕາຢືນຄອຍທີ່ຊຸ້ມປະຕູດ້ານນອກ ຖາມເຖິງພິກສຸນີສຸນທຣີນັນທາວ່າ "ແມ່ເຈົ້າສຸນທຣີນັນທາໄປໃສ ຂະນ້ອຍ"

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ປາຣາຊິກສິກຂາບົທທີ່ ໑ ນິທານວັຕຖຸ

ເມື່ອນາຍສາຣະຫະຫລານຂອງນາງວິສາຂາມິຄາຣມາຕາ ກ່າວຢ່າງນັ້ນ ພິກສຸນີອັນເຕວາສີນີຂອງພິກສຸນີສຸນທຣີນັນທາ ໄດ້ກ່າວກັບນາຍສາຣະຫະຫລານຂອງນາງວິສາຂາມິຄາຣມາຕາ ດັ່ງນີ້ວ່າ "ທ່ານພິກສຸນີສຸນທຣີນັນທາເປັນໄຂ້ ຂະນ້ອຍຈັກຮັບບິນທບາຕໄປຖວາຍ" ລຳດັບນັ້ນ ນາຍສາຣະຫະຫລານຂອງນາງວິສາຂາມິຄາຣມາຕາ ຄິດວ່າ "ກາຣທີ່ເຮົາຕຽມອາຫາຣຖວາຍພິກສຸນີສົງຂ໌ ກໍເພາະແມ່ເຈົ້າສຸນທຣີນັນທາ" ຈຶ່ງສັ່ງໃຫ້ລ້ຽງດູພິກສຸນີສົງຂ໌ແລ້ວເຂົ້າໄປທາງສຳນັກພິກສຸນີ ສມັຍນັ້ນແລພິກສຸນີສຸນທຣີນັນທາຢືນຄອຍນາຍສາຣະຫະຫລານຂອງນາງວິສາຂາມິຄາຣມາຕາ ຢູ່ນອກຊຸ້ມປະຕູວັດພໍເຫັນເຂົາຍ່າງມາແຕ່ໄກຈຶ່ງຫລົບເຂົ້າທີ່ຢູ່ນອນຄຸມໂປງຢູ່ເທິງຕຽງ ລຳດັບນັ້ນ ນາຍສາຣະຫະເຂົ້າໄປຫາພິກສຸນີສຸນທຣີນັນທາເຖິງທີ່ຢູ່ ຄັນເຖິງແລ້ວ ຖາມພິກສຸນີສຸນທຣີນັນທາດັ່ງນີ້ວ່າ "ທ່ານບໍ່ສະບາຍຫລື ເປັນຫຍັງຈຶ່ງນອນຢູ່ ຂະນ້ອຍ" ພິກສຸນີສຸນທຣີນັນທາກ່າວວ່າ "ນາຍ ສະຕຣີຜູ້ປຣາຖນາຄົນ

ທີ່ບໍ່ປຣາຖນາຕອບ ກໍມີອາການເຊັ່ນນີ້ແຫລະ" ເຂົາກ່າວວ່າ "ແມ່ເຈົ້າ ເປັນຫຍັງ ຜູ້ຂ້າຈະບໍ່ປຣາຖນາທ່ານ ແຕ່ຫາໂອກາສທີ່ຈະເຮັດມິດີມິຮ້າຍທ່ານບໍ່ໄດ້" ມີຄວາມກຳຫນັດ ຖືກຕ້ອງກາຍພິກສຸນີສຸນທຣີນັນທາຊຶ່ງມີຄວາມກຳຫນັດ ຄາວນັ້ນ ພິກສຸນີຊຣາມີຕົນເຈັບຮູບນຶ່ງ ນອນຢູ່ບໍ່ໄກຈາກທີ່ຂອງພິກສຸນີສຸນທຣີນັນທານັ້ນ ເຫັນນາຍສາຣຫະຫລານຂອງນາງວິສາຂາມິຄາຣມາຕາ ຜູ້ກຳຫນັດກຳລັງຖືກຕ້ອງກາຍກັບພິກສຸນີສຸນທຣີນັນທາຜູ້ກຳຫນັດ ຈຶ່ງຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າສຸນທຣີນັນທາຜູ້ກຳຫນັດຈຶ່ງຍິນດີກາຣຖືກຕ້ອງກາຍກັບຊາຍຜູ້ກຳຫນັດ ລະ" ບອກເຣື້ອງນັ້ນແກ່ພິກສຸນີທັງຫລາຍ ບັນດາພິກສຸນີຜູ້ມັກນ້ອຍ ສັນໂດດ ມີຄວາມລະອາຍ ມີຄວາມຣະມັດ ຣະວັງ ໃຝ່ກາຣສຶກສາ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າສຸນທຣີນັນທາຜູ້ກຳຫນັດຈຶ່ງຍິນດີກາຣຖືກຕ້ອງກາຍກັບຊາຍຜູ້ກຳຫນັດລະ" ຈາກນັ້ນ ພິກສຸນີເຫລົ່ານັ້ນຈຶ່ງນຳເຣື້ອງໄປບອກພິກສຸທັງຫລາຍ ພວກພິກສຸຜູ້ມັກນ້ອຍ ສັນໂດດ ມີຄວາມລະອາຍ ມີຄວາມຣະມັດຣະວັງ ໃຝ່ກາຣສຶກສາ ກໍຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າສຸນທຣີນັນທາຜູ້ກຳຫນັດຈຶ່ງຍິນດີກາຣຖືກຕ້ອງກາຍກັບຊາຍຜູ້ກຳຫນັດລະ" ຄັນພິກສຸເຫລົ່ານັ້ນຕຳຫນິພິກສຸນີສຸນທຣີນັນທາໂດຍປະການຕ່າງໆແລ້ວຈຶ່ງນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງ ຊາບ

## ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີສຸນທຣີນັນທາກຳຫນັດຍິນດີກາຣຖືກຕ້ອງກາຍກັບຊາຍຜູ້ກຳຫນັດແມ່ນແທ້ບໍ" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ພິກສຸທັງຫລາຍ ກາຣກະທຳຂອງພິກສຸນີສຸນທຣີນັນທາບໍ່ສົມຄວຣ ບໍ່ຄ້ອຍຕາມ ບໍ່ເຫມາະສົມ ບໍ່ແມ່ນກິຈຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວຣທຳ ຈັ່ງໃດພິກສຸນີສຸນທຣີນັນທາຜູ້ກຳຫນັດຈຶ່ງຍິນດີກາຣຖືກຕ້ອງກາຍກັບຊາຍຜູ້ກຳຫນັດລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ທີ່ຈິງກັບຈະເຮັດໃຫ້ຄົນທີ່ບໍ່ເຫລື້ອມໃສກໍບໍ່ເຫລື້ອມໃສໄປເລີຍ ຄົນທີ່ເຫລື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ" ຄັນພຣະຜູ້ມີພຣະພາກຊົງຕຳຫນິພິກສຸນີສຸນທຣີນັນທາໂດຍປະການຕ່າງໆແລ້ວ ໄດ້ຕຣັສໂທສແຫ່ງຄວາມເປັນຄົນລ້ຽງຍາກ ບຳຣຸງຍາກ ມັກມາກບໍ່ສັນໂດດ ຄວາມເກືອກກົ້ວ ຄວາມກຽດຄ້ານ ຕຣັສຄຸນແຫ່ງຄວາມເປັນຄົນລ້ຽງງ່າຍ ບຳຣຸງງ່າຍມັກນ້ອຍ ສັນໂດດ ຄວາມຂັດເກົາ ຄວາມກຳຈັດກິເລສ ອາການຫນ້າເຫລື້ອມໃສ ກາຣບໍ່ສະສົມ

ການປາຣິພຄວາມພຽນໂດຍປະການຕ່າງໆຊຶ່ງສະແດງຫັມມີກຖາແກ່ພິກສຸທັງຫລາຍ ໃຫ້ເຫມາະສົມ ໃຫ້ຄ້ອຍຕາມກັບເຣື້ອງນັ້ນ ແລ້ວຮັບສັ່ງກັບພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ເພາະເຫຕຸນັ້ນ ເຮົາຈະບັນຍັດສິກຂາບົທແກ່ພິກສຸນີທັງຫລາຍ ໂດຍອາສັຍອຳນາຈປໂຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງຊ໌

໒. ເພື່ອຄວາມຜາສຸກແຫ່ງສົງຊ໌

໓. ເພື່ອຂົ່ມພິກສຸນີຜູ້ເກື້ອກູນຍາກ

໔. ເພື່ອຄວາມຢູ່ຜາສຸກແຫ່ງເຫລົ່າພິກສຸນີຜູ້ມີສີລດີງາມ

໕. ເພື່ອປິດກັ້ນອາສວະທັງຫລາຍອັນຈະບັງເກີດໃນປັຈຈຸບັນ

**ພຣະວິນັຍປີດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນຫ໌] ປາຣາຊິກສິກຂາບທທີ່ ໑ ສິກຂາບທວິພັງຄ໌**

໖. ເພື່ອກຳຈັດອາສວະທັງຫລາຍອັນຈະບັງເກີດໃນອນາຄົຕ

໗. ເພື່ອຄວາມເຫລື້ອມໃສ່ຂອງຄົນທີ່ຍັງບໍ່ເຫລື້ອມໃສ

໘. ເພື່ອຄວາມເຫລື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫລື້ອມໃສແລ້ວ

໙. ເພື່ອຄວາມຕັ້ງຫມັ້ນແຫ່ງສັຫຫັມ

໑໐. ເພື່ອເອື້ອເຟື້ອວິນັຍ

ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໖໕໗] ກໍພິກສຸນີໃດກຳຫນັດຍິນດີການຈັບຕ້ອງ ການລູບຄຳ ການຈັບ ການຕ້ອງຫລືການບີບຂອງ ຊາຍຜູ້ກຳຫນັດບໍຣິເວນໃຕ້ຣາກຂວັນ໑ ລົງມາເຫນືອເຂົ່າຂຶ້ນໄປ ແມ່ນພິກສຸນີນີ້ເປັນປາຣາຊິກ ທີ່ຊື່ວ່າອຸພພຊານຸມັນຫລິກາ໔ ຫາສັງວາສບໍ່ໄດ້.

ເຣື້ອງພິກສຸນີສຸນທຣີນັນທາ ຈົບ

**ສິກຂາບົທວິພັງຄ໌**

[໖໕໘] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ມີການງານ ມີຊາຕິວັນນະ ມີຊື່ ມີຕະກູນ ມີ ລັກສນະນິສັຍ ມີຄຸນທັມ ມີອາຣົມນ໌ຢ່າງໃດ ເປັນເຖຣະ ນວກະ ຫລື ມັຊຍິມະ ນີ້ທີ່ພຣະຜູ້ມີພຣະ ພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຊື່ວ່າພິກສຸນີ ເພາະອາສັຍການທ່ຽວຂໍ ຊື່ວ່າພິກສຸນີ ເພາະໃຊ້ຜືນຜ້າທີ່ຖືກເຮັດໃຫ້ເສັຽຣາຄາ ຊື່ວ່າພິກສຸນີ ເພາະຮຽກກັນໂດຍໂວຫານ ຊື່ວ່າພິກສຸນີ ເພາະການປະຕິຍານຕົນ ຊື່ວ່າພິກສຸນີ ເພາະພຣະພຸດທະເຈົ້າຊົງບອຊໃຫ້ ຊື່ວ່າພິກສຸນີ ເພາະເປັນຜູ້ອຸປສົມບົທດ້ວຍໄຕຣສຣນຄົມນ໌

**ໝາຍເຫດ :**

໑ ໃຕ້ຣາກຂວັນ ຄືໃຕ້ສ່ວນຂອງຮ່າງກາຍທີ່ຮຽກວ່າ ທ້ອງນ້ອຍ

໔ ຄຳວ່າ "ອຸພພຊານຸມັນທລິກາ" ແປວ່າ ບໍຣິເວນເຫນືອເຂົ່າ ແມ່ນບໍຣິເວນເຫນືອຂໍ້ສອກກໍຮວມຢູ່ກັບບໍຣິເວນເຫນືອເຂົ່າ ຄຳນີ້ເປັນຊື່ຮຽກພິກສຸນີຜູ້ຕ້ອງອາບັຕິປາຣາຊິກສິກຂາບົທນີ້ (ວິ. ອ. ໔/໓໕໗-໗໘/໔໓໖)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ປາຣາຊິກສິກຂາບທທີ່ ໑ ສິກຂາບທວິພັງຄ໌**

ຊື່ວ່າພິກສຸນີເພາະເປັນຜູ້ຈະເຣີນ ຊື່ວ່າພິກສຸນີເພາະເປັນຜູ້ມີສາຣະ ຊື່ວ່າພິກສຸນີເພາະເປັນຜູ້ຍັງຕ້ອງສຶກສາ ຊື່ວ່າພິກສຸນີເພາະເປັນຜູ້ບໍ່ຕ້ອງສຶກສາ ຊື່ວ່າພິກສຸນີເພາະເປັນຜູ້ທີ່ສົງຂ໌ ໒ ຝ່າຍພ້ອມພຽງກັນອຸປສົມບົທໃຫ້ດ້ວຍຍັຕຕິຈຕຸຕຖກັມທີ່ຖືກຕ້ອງສົມຄວນແກ່ເຫຕຸ ໃນພິກສຸນີທີ່ກ່າວມານັ້ນ ພິກສຸນີທີ່ສົງຂ໌ ໒ ຝ່າຍພ້ອມພຽງກັນອຸປສົມບົທໃຫ້ດ້ວຍຍັຕຕິຈຕຸຕຖກັມທີ່ຖືກຕ້ອງສົມຄວນແກ່ເຫຕຸນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ກຳຫນັດ ໄດ້ແກ່ ພິກສຸນີມີຄວາມຍິນດີ ເພ່ງເລັງ ມີຈິຕຮັກໃຄ່

ທີ່ຊື່ວ່າ ຜູ້ກຳຫນັດ ໄດ້ແກ່ ຊາຍມີຄວາມຍິນດີ ເພ່ງເລັງ ມີຈິຕຮັກໃຄ່

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ແຕ່ເປັນຊາຍທີ່ຮູ້ດຽງສາ ສາມາດຖືກຕ້ອງກາຍໄດ້

ຄຳວ່າ ໃຕ້ຣາກຂວັນລົງມາ ໄດ້ແກ່ ພາຍໃຕ້ຣາກຂວັນລົງມາ

ຄຳວ່າ ເຫນືອເຂົ່າຂຶ້ນໄປ ໄດ້ແກ່ ບໍຣິເວນເຂົ່າສ່ວນເທິງຂຶ້ນໄປ

ທີ່ຊື່ວ່າ ຈັບຕ້ອງ ໄດ້ແກ່ ກິຣິຍາພຽງແຕ່ລູບຄຳ

ທີ່ຊື່ວ່າ ລູບຄຳ ໄດ້ແກ່ ລູບຄຳໄປທາງພຸ້ນທາງນີ້

ທີ່ຊື່ວ່າ ຈັບ ໄດ້ແກ່ ລັກສນະພຽງແຕ່ຈັບ

ທີ່ຊື່ວ່າ ຕ້ອງ ໄດ້ແກ່ ລັກສນະພຽງສັມຜັສ
ຄຳວ່າ ຍິນດີ . . . ຫລືການບີບ ໄດ້ແກ່ ຍິນດີທີ່ຈະໃຫ້ຈັບອວັຍວະແລ້ວບີບ
ຄຳວ່າ ແມ່ນພິກສຸນີນີ້ ພຣະຜູ້ມີພຣະພາກຕຣັສຫຽບຄຽງພິກສຸນີຮູບກ່ອນໆ໑
ຄຳວ່າ ເປັນປາຣາຊິກ ອະທິບາຍວ່າ ພິກສຸນີກຳຫນັດຍິນດີການຈັບຕ້ອງ ການລູບຄຳ ການຈັບ ການຕ້ອງ ຫລືການບີບຂອງຊາຍຜູ້ກຳຫນັດບໍຣິເວນໃຕ້ຣາກຂວັນລົງມາເຫນືອເຂົ່າຂຶ້ນໄປ ຍ່ອມບໍ່ເປັນສະມະນະຍິງ ບໍ່ເປັນເຊື້ອສາຍສາກຍທິດາ ປຽບເຫມືອນຄົນຖືກຕັດສີສະ ບໍ່ອາຈມີຊີວິຕຢູ່ໄດ້ໂດຍການຕໍ່ສີສະເຂົ້າກັບຮ່າງກາຍນັ້ນ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ເປັນປາຣາຊິກ

**ໝາຍເຫດ :**

໑ ຫມາຍເຖິງພິກສຸນີຜູ້ຕ້ອງອາບັຕິປາຣາຊິກ ໔ ສິກຂາບົທ ອັນເປັນຄວາມຜິດເຊັ່ນດຽວກັບປໍຣາຊິກ ໔ ສິກຂາບົທ ຂອງພິກສຸສົງຂ໌ (ດູ ພຣະວິນັຍປິດົກແປລ ໑/໓ລ/໔ລ,໔໔/໓໑,໔໔/໓໔,໗ລ/໗໗-໗ລ,ລ໑/໗໐,໑໖໗/໑໓ລ, ໑໗໑/໑໔໐-໑໔໑,໑ລ໖/໑໗໔,໑ລ໗/໑໗໓)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ປາຣາຊິກສິກຂາບທທີ່ ໑ ບທພາຊນີຍ໌**

ຄຳວ່າ ຫາສັງວາສບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າສັງວາສ ໄດ້ແກ່ ກັມທີ່ທຳຮ່ວມກັນ ອຸທເທສທີ່ສວດຮ່ວມກັນ ຄວາມມີສິກຂາສເມີກັນ ນີ້ຊື່ວ່າສັງວາສ ສັງວາສນັ້ນບໍ່ມີກັບພິກສຸນີຮູບນັ້ນ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ຫາສັງວາສບໍ່ໄດ້

**ບົທພາຊນີຍ໌**

[໖໕ລ] ທັງສອງຝ່າຍມີຄວາມກຳຫນັດ ຝ່າຍໃດຝ່າຍນຶ່ງໃຊ້ກາຍຈັບຕ້ອງກາຍບໍຣິເວນໃຕ້ຣາກຂວັນລົງມາເຫນືອເຂົ່າຂຶ້ນໄປ ພິກສຸນີຕ້ອງອາບັຕິປາຣາຊິກ໑ ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິຖຸລລັຈຈັຍ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງກາຍ ຕ້ອງອາບັຕິຖຸລລັຈຈັຍ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັຕິທຸກກະຕະ ໃຊ້ກາຍຖືກຕ້ອງກາຍບໍຣິເວນເຫນືອຣາກຂວັນຂຶ້ນໄປໃຕ້ເຂົ່າລົງມາ ຕ້ອງອາບັຕິຖຸລລັຈຈັຍ ໃຊ້ກາຍຖືກຕ້ອງຂອງທີ່ເນື່ອງ

ດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັຕິທຸກກະຕະ

[໓໓໐] ຝ່າຍນຶ່ງມີຄວາມກຳຫນັດ ໃຊ້ກາຍຈັບຕ້ອງກາຍ ບໍຣິເວນໃຕ້ຣາກຂວັນລົງມາເຫນືອເຂົ່າຂຶ້ນໄປ ຕ້ອງອາບັຕິຖຸລລັຈຈັຍ ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງເນື່ອງດ້ວຍກາຍຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງກາຍຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັຕິທຸກກະຕະ

**ໝາຍເຫດ :**

໑ ເມື່ອພິກສຸນີແລະຊາຍມີຄວາມກຳຫນັດໃນອັນຈະຖືກຕ້ອງກາຍກັນ ພິກສຸນີໃຊ້ກາຍຕາມທີ່ກຳຫນົດ ຖືກຕ້ອງກາຍສ່ວນໃດສ່ວນນຶ່ງຂອງຊາຍຫລືຊາຍ ໃຊ້ກາຍສ່ວນໃດສ່ວນນຶ່ງ ຖືກຕ້ອງກາຍຕາມທີ່ກຳຫນົດຂອງພິກສຸນີດ້ວຍອາການທັງ ໔ ນັ້ນ ພິກສຸນີຕ້ອງອາບັຕິປາຣາຊິກ (ວິ. ອ. ໔/໓໕໙/໔໓໖)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນ] ປາຣາຊິກສິກຂາບທທີ່ ໑ ບທພາຊນີຍ໌

ໃຊ້ກາຍຈັບຕ້ອງກາຍບໍຣິເວນເຫນືອຣາກຂວັນຂຶ້ນໄປໃຕ້ເຂົ່າລົງມາ ຕ້ອງອາບັຕິທຸກກະຕະ ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກ ຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັຕິທຸກກະຕະ

[໘໘໑] ທັງສອງຝ່າຍມີຄວາມກຳໜັດ ໃຊ້ກາຍຖືກຕ້ອງກາຍຂອງຍັກສ໌ ເຜດ ກະເທີຍ ຫລືສັດວ໌ ດັງຣະສານທີ່ແປງກາຍເປັນມະນຸສຍ໌ ບໍຣິເວນໃຕ້ຣາກຂວັນລົງມາເໜືອເຂົ່າຂຶ້ນໄປ ຕ້ອງອາບັຕິ ຖຸລລັຈຈັຍ ໃຊ້ກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍ ກາຍຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍ ກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນ ໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັຕິທຸກກະຕະ ໃຊ້ກາຍຖືກຕ້ອງກາຍບໍຣິເວນເໜືອຣາກຂວັນຂຶ້ນໄປໃຕ້ເຂົ່າລົງມາ ຕ້ອງ ອາບັຕິທຸກກະຕະ

ໃຊ້ກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງ ກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິ ທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ ເນື່ອງ

ດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງທີ່ໂຍນມາ ຕ້ອງອາບັຕິທຸກກະຕະ

[໘໘໔] ຝ່າຍນຶ່ງມີຄວາມກຳໜັດ ໃຊ້ກາຍຈັບຕ້ອງກາຍ ບໍຣິເວນໃຕ້ຣາກຂວັນລົງມາເໜືອເຂົ່າຂຶ້ນ ໄປ ຕ້ອງອາບັຕິທຸກກະຕະ ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງ ທີ່ເນື່ອງດ້ວຍກາຍຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງ ທີ່ໂຍນມາ ຕ້ອງອາບັຕິທຸກກະຕະ ໃຊ້ກາຍຈັບຕ້ອງກາຍບໍຣິເວນເໜືອຣາກຂວັນຂຶ້ນໄປໃຕ້ເຂົ່າລົງ ມາ ຕ້ອງອາບັຕິທຸກກະຕະ ໃຊ້ກາຍຈັບຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ ເນື່ອງດ້ວຍກາຍຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງທີ່ເນື່ອງດ້ວຍກາຍຖືກຕ້ອງຂອງທີ່ ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງກາຍ ຕ້ອງອາບັຕິທຸກກະຕະ ໃຊ້ ຂອງໂຍນໄປຖືກຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັຕິທຸກກະຕະ ໃຊ້ຂອງໂຍນໄປຖືກຕ້ອງຂອງ ທີ່ໂຍນມາ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໕໕໓] ໑. ພິກສຸນີບໍ່ຈົງໃຈ

໒. ພິກສຸນີບໍ່ມີສຕິ

໓. ພິກສຸນີຜູ້ບໍ່ຮູ້

໔. ພິກສຸນີຜູ້ບໍ່ຍິນດີ

໕. ພິກສຸນີວິກົລຈິຕ

໖. ພິກສຸນີຈິຕປັ່ນປ່ວນ

໗. ພິກສຸນີກະວົນກະວາຍເພາະເວທນາ

໘. ພິກສຸນີຕົ້ນບັນຍັດ

ປາຣາຊິກສິກຂາບົດທີ ໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນຫ໌] ປາຣາຊິກສິກຂາບົດທີ ໒ ນິທານວັຕຖຸ**

ປາຣາຊິກສິກຂາບົດທີ ໒ ວ່າດ້ວຍການປົກປິດໂທສ

**ເຣື້ອງພິກສຸນີສຸນທຣີນັນທາ**

[໕໕໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີສຸນທຣີນັນທາມີຄັນພ໌ກັບນາຍສາລຫະຫລານຂອງນາງວິສາຂາມິຄາຣມາຕາ ແຕ່ປົກປິດເຣື້ອງໄວ້ໃນຂນະທີ່ຄັນພ໌ຍັງອ່ອນໆ ເມື່ອຄັນພ໌ແກ່ຈຶ່ງສຶກໄປຄອດບຸຕຣ ພິກສຸນີທັງຫລາຍໄດ້ກ່າວກັບພິກສຸນີຖຸລລະນັນທາດັ່ງນີ້ວ່າ “ແມ່ເຈົ້າ ສຸນທຣີນັນທາສຶກໄປບໍ່ດົນກໍຄອດບຸຕຣ ທ່ານຄົງຈະມີຄັນພ໌ຂນະເປັນພິກສຸນີແລ້ວຕິບໍ່” ພິກສຸນີຖຸລລະນັນທາ ຈຶ່ງຍອມຮັບ ພິກສຸນີທັງຫລາຍກ່າວວ່າ “ແມ່ເຈົ້າ ທ່ານຮູ້ວ່າພິກສຸນີຕ້ອງອາບັຕິປາຣາຊິກ ເຫຕຸໃດຈຶ່ງບໍ່ໂຈທເອງ ບໍ່ບອກແກ່ຄນະລະ” ພິກສຸນີຖຸລລະນັນທາຕອບວ່າ “ແມ່ເຈົ້າ ຄວາມເສັ່ງຫາຍຂອງພິກສຸນີສຸນທຣີນັນທານີ້ກໍຄືຄວາມເສັ່ງຫາຍຂອງດິແນວນັ້ນແຫລະ ຄວາມເສື່ອມກຽດຂອງພິກສຸນີສຸນທຣີນັນທາ ນີ້ກໍ

ຄືຄວາມເສື່ອມກຽດຂອງດິແນວນັ້ນແຫລະ ຄວາມອັປຍົສຂອງພິກສຸນີສຸນທຣີນັນທາ ນີ້ກໍຄືຄວາມ

ອັປຍົສຂອງດີແນວນັ້ນແຫລະ ຄວາມເສື່ອມລາພຂອງພິກສຸນີສຸນທຣີນັນທາ ນີ້ກໍຄືຄວາມເສື່ອມລາພຂອງດີແນວນັ້ນແຫລະ ຂະນ້ອຍຈະບອກຄວາມເສັ່ງຫາຍຂອງຕົນ ຄວາມເສື່ອມກຽດຂອງຕົນ ຄວາມອັປຍົສຂອງຕົນ ຄວາມເສື່ອມລາພຂອງຕົນແກ່ຄົນອື່ນໄດ້ຢ່າງໃດ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຮູ້ຢູ່ຈຶ່ງບໍ່ທັກທ້ວງພິກສຸນີຜູ້ຕ້ອງຫຼັມຄືປາຣາຊິກດ້ວຍຕົນເອງ ບໍ່ບອກແກ່ຄນະລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນໍາເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ແລ້ວຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາຮູ້ຢູ່ ບໍ່ທັກທ້ວງພິກສຸນີຜູ້ຕ້ອງຫຼັມ ຄືປາຣາຊິກດ້ວຍຕົນເອງ ບໍ່ບອກແກ່ຄນະ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາຫນິວ່າ"ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຮູ້ຢູ່ຈຶ່ງບໍ່ທັກທ້ວງພິກສຸນີຜູ້ຕ້ອງຫຼັມຄືປາຣາຊິກດ້ວຍຕົນເອງ ບໍ່ບອກແກ່ຄນະລະ ພິກສຸທັງຫລາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໖໕] ກໍພິກສຸນີໃດຮູ້ຢູ່ບໍ່ທັກທ້ວງພິກສຸນີຜູ້ຕ້ອງຫຼັມຄືປາຣາຊິກດ້ວຍຕົນເອງ ບໍ່ບອກແກ່ຄນະ ກໍໃນການໃດພິກສຸນີນັ້ນຍັງຄອງເພສຢູ່ກໍດີ ເຄື່ອນໄປກໍດີ ຖືກນາສນະກໍດີ ໄປເຂົ້າຮີດກໍດີ ພາຍຫລັງພິກສຸນີຜູ້ຮູ້ເຣື່ອງນັ້ນຄວນກ່າວຢ່າງນີ້ວ່າ "ແມ່ເຈົ້າ ເມື່ອກ່ອນຂະນ້ອຍຮູ້ຈັກພິກສຸນີນີ້ດີວ່າ 'ນາງມີຄວາມປະພຶດຢ່າງນີ້ໆແຕ່ຂະນ້ອຍບໍ່ໄດ້ໂຈທດ້ວຍຕົນເອງ ບໍ່ໄດ້ບອກແກ່ຄນະ' ແມ່ນພິກສຸນີນີ້ເປັນປາຣາຊິກທີ່ຊື່ວ່າວັຊຊ-ປຕິຈສາທິກາ໑ ຫາສັງວາສບໍ່ໄດ້

ເຣື່ອງພິກສຸນີສຸນທຣີນັນທາ ຈົບ

**ສິກຂາບົທວິພັງຄ໌**

[໓໓໓] ຄຳວ່າ ກໍ. . . ໃດ ຄືຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າ ພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

**ໝາຍເຫດ :**

໑ ຄຳວ່າ "ວັຊຊປຕິຈສາທິກາ" ແປວ່າ ປົກປິດໂທສ, ປົກປິດຄວາມຜິດ ເປັນຊື່ຮຽກພິກສຸນີຜູ້ຕ້ອງອາບັຕິປາຣາຊິກ ສິກຂາບົທນີ້ (ວິ. ອ. ໔/໓໓໕/໔໓໕)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ປາຣາຊິກສິກຂາບທທີ່ ໔ ສິກຂາບທວິພັງຄ໌**

ທີ່ຊື່ວ່າ ຮູ້ຢູ່ ຄື ພິກສຸນີນັ້ນຮູ້ເອງ ຄົນເຫລົ່າອື່ນບອກທ່ານ ຫລືພິກສຸນີທີ່ຕ້ອງອາບັຕິນັ້ນບອກ
ຄຳວ່າ ຕ້ອງທັມຄືປາຣາຊິກ ຄື ຕ້ອງອາບັຕິປາຣາຊິກ ໆ ຂໍ້ໃດຂໍ້ນຶ່ງ
ຄຳວ່າ ບໍ່ໂຈທດ້ວຍຕົນເອງ ຄື ບໍ່ທັກທ້ວງເອງ
ຄຳວ່າ ບໍ່ບອກແກ່ຄນະ ໝາຍເຖິງ ບໍ່ບອກພິກສຸນີອື່ນໆ
ຄຳວ່າ ກໍໃນກາລໃດພິກສຸນີນັ້ນຍັງຄອງເພສຢູ່ກໍດີ ເຄື່ອນໄປກໍດີ ເປັນຕົ້ນ
ອະທິບາຍວ່າ ທີ່ຊື່ວ່າ ຄອງເພສຢູ່ ພຣະຜູ້ມີພຣະພາກຕຣັສໝາຍເຖິງພິກສຸນີຜູ້ດຳຣົງຢູ່ໃນເພສຂອງຕົນ ທີ່ຊື່ວ່າ ເຄື່ອນໄປ ຕຣັສໝາຍເຖິງພິກສຸນີຜູ້ມໍຣະນະພາພ ທີ່ຊື່ວ່າ ຖືກນາສນະ ຕຣັສໝາຍເຖິງພິກສຸນີຜູ້ສຶກເອງຫລືຖືກຜູ້ອື່ນໃຫ້ສຶກ ທີ່ຊື່ວ່າ ເຂົ້າຣີດ ຕຣັສໝາຍເຖິງພິກສຸນີຜູ້ເຂົ້າຣີດເດັຽຣະຖີຍ໌ ພາຍຫລັງພິກສຸນີຜູ້ຮູ້ເຣື່ອງນັ້ນຄວນກ່າວຢ່າງນີ້ວ່າ "ແມ່ເຈົ້າ ເມື່ອກ່ອນຂະນ້ອຍຮູ້ຈັກພິກສຸນີນີ້ດີວ່າ 'ນາງມີຄວາມປະພຶດຢ່າງນີ້ໆ"
ຄຳວ່າ ແຕ່ຂະນ້ອຍບໍ່ໄດ້ໂຈທດ້ວຍຕົນເອງ ຄື ແຕ່ຂະນ້ອຍບໍ່ໄດ້ທັກທ້ວງດ້ວຍຕົນເອງ
ຄຳວ່າ ບໍ່ໄດ້ບອກແກ່ຄນະ ຄື ຂະນ້ອຍບໍ່ບອກພິກສຸນີເຫລົ່າອື່ນ
ຄຳວ່າ ແມ່ນພິກສຸນີນີ້ ພຣະຜູ້ມີພຣະພາກຕຣັສຫງບຄຽງພິກສຸນີຮູບກ່ອນໆ
ຄຳວ່າ ເປັນປາຣາຊິກ ອະທິບາຍວ່າ ພິກສຸນີຮູ້ຢູ່ວ່າພອທອດທຸຣະວ່າ "ເຮົາຈະບໍ່ທັກທ້ວງພິກສຸນີຜູ້ຕ້ອງທັມຄືປາຣາຊິກດ້ວຍຕົນເອງ ຈະບໍ່ບອກແກ່ໝູ່ຄນະ" ທ່ານຍ່ອມບໍ່ເປັນສະມະນະຍິງ ບໍ່ເປັນ

ເຊື້ອສາຍສາກຍຫຼິດາ ປຽບເຫມືອນໃບໄມ້ແຫ້ງເຫລືອງຫລຸດຈາກຂົ້ວນ ແລ້ວບໍ່ອາຈເປັນຂອງຂຽວ ສົດຕໍ່ໄປໄດ້ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ເປັນປາຣາຊິກ

ຄຳວ່າ ຫາສັງວາສບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າສັງວາສ ໄດ້ແກ່ ກັມທີ່ທຳຮ່ວມກັນ ອຸທເທສທີ່ສວດຮ່ວມກັນ ຄວາມມີສິກຂາສເມີກັນ ນີ້ຊື່ວ່າສັງວາສ ສັງວາສນັ້ນບໍ່ມີກັບພິກສຸນີຮູບນັ້ນ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ຫາສັງວາສບໍ່ໄດ້

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໖໖໗] ໑. ພິກສຸນີບໍ່ບອກດ້ວຍຄິດວ່າ "ສົງຂ໌ຈັກບາດຫມາງ ຜິດຖຽງ ຂັດແຍ້ງຫລືວິວາທກັນ"
໒. ພິກສຸນີບໍ່ບອກດ້ວຍຄິດວ່າ "ສົງຂ໌ຈັກແຕກແຍກ ຈັກແຕກແຍກ"
໓. ພິກສຸນີບໍ່ບອກດ້ວຍຄິດວ່າ "ພິກສຸນີນີ້ເປັນຄົນຫຍາບຊ້າ ໂຫດຮ້າຍ ຈັກທຳອັນຕຣາຍແກ່ຊີວິຕຫລືອັນຕຣາຍແກ່ພຣົມຈັນຍ໌ໄດ້"
໔. ພິກສຸນີບໍ່ບອກເພາະບໍ່ພົບພິກສຸນີອື່ນໆທີ່ສົມຄວຣ
໕. ພິກສຸນີບໍ່ປະສົງຄ໌ຈະປົກປິດແຕ່ຍັງບໍ່ໄດ້ບອກໃຜ
໖. ພິກສຸນີບໍ່ບອກດ້ວຍຄິດວ່າ "ຜູ້ນັ້ນຈັກເປີດເຜີຍເພາະກັມຂອງຕົນເອງ"
໗. ພິກສຸນີວິກົລຈິຕ
໘. ພິກສຸນີຕົ້ນບັນຍັດ

ປາຣາຊິກສິກຂາບົດທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ປາຣາຊິກສິກຂາບທທີ່ ໓ ນິທານວັຕຖຸ**

**ປາຣາຊິກສິກຂາບົດທີ ໓**

ວ່າດ້ວຍການປະພຶດຕາມພິກສຸທີ່ຖືກສົງຂ໌ລົງອຸກເຂປນີຍກັມ

**ເຣື້ອງພິກສຸນີຖຸລລະນັນທາ**

[໖໖໘] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ

ຫົກເຊັດຖີ ເຂຕກຸງສາວັດຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາປະພຶດຕາມພຣະອຣິຕຖະ໑ຜູ້ມີບັນພະບຸຣຸສ ເປັນພານຂ້ານິກແຮ້ງທີ່ສົງຂ໌ພ້ອມພຽງກັນລົງອຸກເຂປນິຍກັມແລ້ວ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລະນັນທາຈຶ່ງປະພຶດຕາມພຣະອຣິຕຖະຜູ້ ມີບັນພະບຸຣຸສເປັນພານຂ້ານິກແຮ້ງທີ່ສົງຂ໌ພ້ອມພຽງກັນລົງອຸກເຂປນິຍກັມລະ" ຄັນແລ້ວ ພິກສຸນີ ເຫລົ່ານັ້ນໄດ້ນຳເອົາເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເອົາເຣື່ອງນີ້ໄປຂາບທູລ ພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາປະພຶດຕາມພິກສຸຊື່ອຣິຕຖະຜູ້ມີບັນພະ ບຸຣຸສເປັນພານຂ້ານິກແຮ້ງທີ່ສົງຂ໌ພ້ອມພຽງກັນລົງອຸກເຂປນິຍກັມ ແມ່ນແທ້ບໍ່" ພວກພິກສຸທູລ ຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳຫນິວ່າ "ຯລຯ ພິກສຸ ທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງປະພຶດຕາມພິກສຸຊື່ອຣິຕຖະຜູ້ມີບັນພະບຸຣຸສເປັນພານຂ້ານິກ ແຮ້ງ ທີ່ສົງຂ໌ພ້ອມພຽງກັນລົງອຸກເຂປນິຍກັມລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດ ໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມ ໃສຢູ່ແລ້ວໃຫ້ເຫລື້ອມໃສ ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາ ບົທນີ້ຂຶ້ນສະແດງ ດັ່ງນີ້

**ໝາຍເຫດ :**

໑ ຄຳວ່າ "ປະພຶດຕາມພຣະອຣິຕຖະ" ໃນທີ່ນີ້ຫມາຍເຖິງປະພຶດໃນທຳນອງດຽວກັນ ປະພຶດຮຽນ ແບບ ຄື ພຣະອຣິຕຖະມີທິຕຖິບາປເກີດຂຶ້ນໃນໃຈວ່າ "ຕົວເອງຮູ້ທັມເຖິງຂນາດທີ່ວ່າ ທັມຕາມທີ່ ພຣະຜູ້ມີພຣະພາກຕຣັສວ່າ ເປັນທັມທຳອັນຕຣາຍກໍຫາສາມາດທຳອັນຕຣາຍໄດ້ຈິງບໍ່. . . " ພິກສຸນີຖຸລລະນັນທາກໍມີທິຕຖິ ເຊັ່ນນັ້ນເຫມືອນກັນ (ເບິ່ງ ວິນັຍປິດົກແປລ ເຫລັ້ມ ໔/໔໑໗/ ໕໔໕)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ປາຣາຊິກສິກຂາບທທີ່ ໖ ສິກຂາບທວິພັງຄ໌**

**ພຣະບັນຍັດ**

[໘໘໙] ກໍພິກຂຸນີໃດປະພຶດຕາມພິກຂຸຜູ້ຖືກສົງຂ໌ພ້ອມພຽງກັນລົງອຸກເຂປນີຍກັມໂດຍທັມ ໂດຍວິນັຍ ໂດຍສັຕຖຸສາສນ໌ນັ້ນ ຜູ້ບໍ່ເອື້ອເຟື້ອ ສົງຂ໌ຍັງບໍ່ຮັບຮອງ ຍັງບໍ່ໄດ້ທຳພິກຂຸຜູ້ມີສັງວາສ ສມີກັນໃຫ້ເປັນສະຫາຍ໑ ພິກຂຸນີນັ້ນອັນພິກຂຸນີທັງຫລາຍ ຄວນວ່າກ່າວຕັກເຕືອນຢ່າງນີ້ວ່າ "ແມ່ເຈົ້າ ພິກຂຸນັ້ນຖືກສົງຂ໌ພ້ອມພຽງກັນລົງອຸກເຂປນີຍກັມໂດຍທັມ ໂດຍວິນັຍ ໂດຍສັຕຖຸສາສນ໌໔ ເປັນຜູ້ບໍ່ເອື້ອເຟື້ອ ສົງຂ໌ຍັງບໍ່ຮັບຮອງ ຍັງບໍ່ໄດ້ທຳພິກຂຸຜູ້ມີສັງວາສສມີກັນໃຫ້ເປັນສະຫາຍ ແມ່ເຈົ້າຢ່າປະພຶດຕາມພິກຂຸນັ້ນ" ພິກຂຸນີນັ້ນຜູ້ອັນພິກຂຸນີທັງຫລາຍວ່າກ່າວຢູ່ຢ່າງນີ້ ຍັງຍຶກຍ້ອງຢູ່ຢ່າງນັ້ນ ພິກຂຸນີນັ້ນອັນພິກຂຸນີທັງຫລາຍຄວນສວດສມນຸພາສນ໌ຈົນຄົບ ໕ ຄັ້ງເພື່ອໃຫ້ສລະເຣື່ອງນັ້ນ ຖ້ານາງກຳລັງຖືກສວດສມນຸພາສນ໌ກວ່າຈະຄົບ ໕ ຄັ້ງສລະເຣື່ອງນັ້ນໄດ້ນັ້ນເປັນກາຣດີ ຖ້ານາງບໍ່ສລະ ແມ່ນພິກຂຸນີນີ້ກໍເປັນປາຣາຊິກຊື່ອຸກຂິຕຕານຸວັຕຕິກາ໕ ຫາສັງວາສບໍ່ໄດ້.

ເຣື່ອງພິກຂຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໘໑໐] ຄຳວ່າ ກໍ. . . ໃດ ຄືຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມຫມາຍນີ້

**ໝາຍເຫດ :**

໑ ສມານສໍວາສກາ ພິກຂູ ສະຫາຍາ ນາມ, ຍສສ ປນ ໂສ ສໍວາໂສ ເຕຫິ ສທທິ ນຕຖິ ນ ເຕນ ເຕ ສະຫາຍາ ກຕາ ໂຫນຕິ, ອິຕິ ໂສ ອກຕສຫາໂຍ ນາມ. ພິກຂຸທັງຫລາຍຜູ້ມີສັງວາສສມີກັນຊື່ວ່າ ສະຫາຍ ກໍພິກຂຸໃດບໍ່ມີສັງວາສນັ້ນກັບສະຫາຍເຫລົ່ານັ້ນ (ແລະ)ພິກຂຸນັ້ນບໍ່ໄດ້ທຳພິກຂຸຜູ້ມີສັງວາສສມີກັນນັ້ນໃຫ້ເປັນສະຫາຍຂອງຕົນ ເພາະເຫຕຸນັ້ນ ພິກຂຸນັ້ນຈຶ່ງຊື່ວ່າ ຍັງບໍ່ໄດ້ທຳພິກຂຸຜູ້ມີສັງວາສສມີກັນໃຫ້ເປັນສະຫາຍ (ກງຂາ. ອ. ໕໔໔)

໔ "ໂດຍທັມ" ຄືເຣື່ອງຈິງ,ໂດຍເຣື່ອງທີ່ເປັນແມ່ນແທ້"ໂດຍວິນັຍ" ຄືໂຈທແລ້ວໃຫ້ຈຳເລີຍໃຫ້ກາຣ "ໂດຍສັຕຖຸສາສນ໌" ຄື ດ້ວຍຄວາມເຖິງພ້ອມແຫ່ງຍັຕຕິແລະອນຸສາວນາຫລືໂດຍສາສນາຂອງພຣະພຸດທະເຈົ້າ (ວິ. ອ. ໔/໘໘໙-໘໑໐/໔໘໘)

໕ ຄຳວ່າ "ອຸກຂິຕຕານຸວັຕຕິກາ" ແປວ່າ ປະພຶດຕາມຜູ້ຖືກສົງຂ໌ຍກວັຕຣ ຖືກສົງຂ໌ລົງໂທສໂດຍ

ການໄລ່ອອກຈາກຫມູ່ ຫມາຍເຖິງຖືກສົງຄ໌ລົງອຸກເຂປນີຍກັມນັ້ນເອງ ຄຳນີ້ເປັນຊື່ຮຽກພິກສຸນີຜູ້ຕ້ອງອາບັຕິປາຣາຊິກສິກຂາບົທນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນຫ໌] ປາຣາຊິກສິກຂາບທທີ່ ໓ ສິກຂາບທວິພັງຄ໌**

ສົງຄ໌ທີ່ຊື່ວ່າ ພ້ອມພຽງກັນ ຄື ມີສັງວາສສະເມີກັນ ຢູ່ໃນສະມານສັງວາສສີມາ
ທີ່ຊື່ວ່າ ຖືກ . . . ລົງອຸກເຂປນີຍກັມ ຄື ຖືກລົງອຸກເຂປນີຍກັມເພາະບໍ່ເຫັນ ເພາະບໍ່ທຳຄືນ ຫລື ເພາະບໍ່ສະລະຄືນອາບັຕິ
ຄຳວ່າ ໂດຍທັມ ໂດຍວິນັຍ ຄື ໂດຍທັມໃດ ໂດຍວິນັຍໃດ
ຄຳວ່າ ໂດຍສັຕຖຸສາສນ໌ ຄື ໂດຍຄຳສັ່ງສອນຂອງພຣະຊິນເຈົ້າ ໂດຍຄຳສັ່ງສອນຂອງພຣະພຸດທະເຈົ້າ
ທີ່ຊື່ວ່າ ຜູ້ບໍ່ເອື້ອເຟື້ອ ຄື ບໍ່ຍອມຮັບສົງຄ໌ ຄນະ ບຸຄຄົລ ຫລືກັມ
ທີ່ຊື່ວ່າ ສົງຄ໌ຍັງບໍ່ຮັບຮອງ ຄື ຖືກສົງຄ໌ຂັບໄລ່ແລ້ວຍັງບໍ່ຮຽກກັບເຂົ້າຫມູ່
ທີ່ຊື່ວ່າ ຍັງບໍ່ໄດ້ທຳພິກສຸຜູ້ມີສັງວາສສະເມີກັນໃຫ້ເປັນສະຫາຍ ຄື ພິກສຸທັງຫລາຍ ຜູ້ມີສັງວາສສະເມີກັນ໑ ພຣະຜູ້ມີພຣະພາກຕຣັສຮຽກວ່າ ຜູ້ເປັນສະຫາຍ ພິກສຸຜູ້ຖືກສົງຄ໌ລົງອຸກເຂປນີຍກັມ ບໍ່ມີສັງວາສນັ້ນກັບພິກສຸເຫລົ່ານັ້ນ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ “ຍັງບໍ່ໄດ້ທຳພິກສຸຜູ້ມີສັງວາສສະເມີກັນໃຫ້ເປັນສະຫາຍ”
ຄຳວ່າ ປະພຶດຕາມພິກສຸ . . . ນັ້ນ ຄວາມວ່າ ພິກສຸນັ້ນມີຄວາມເຫັນເຊັ່ນໃດ ມີຄວາມຊອບໃຈເຊັ່ນໃດ ມີຄວາມພໍໃຈເຊັ່ນໃດ ແມ່ນພິກສຸນີນັ້ນກໍເປັນຜູ້ມີຄວາມເຫັນເຊັ່ນນັ້ນ ມີຄວາມຊອບໃຈເຊັ່ນນັ້ນ ມີຄວາມພໍໃຈເຊັ່ນນັ້ນ
ຄຳວ່າ ພິກສຸນີນັ້ນ ໄດ້ແກ່ ພິກສຸນີຜູ້ປະພຶດຕາມພິກສຸຜູ້ຖືກສົງຄ໌ລົງອຸກເຂປນີຍກັມ
ຄຳວ່າ ອັນພິກສຸນີທັງຫລາຍ ໄດ້ແກ່ ພິກສຸນີເຫລົ່າອື່ນ ພິກສຸນີທັງຫລາຍທີ່ໄດ້ເຫັນໄດ້ຍິນຄວນວ່າກ່າວຕັກເຕືອນທ່ານວ່າ “ແມ່ເຈົ້າ ພິກສຸນັ້ນຖືກສົງຄ໌ພ້ອມພຽງກັນລົງອຸກເຂປນີຍກັມໂດຍທັມໂດຍວິນັຍ ໂດຍສັຕຖຸສາສນ໌ ເປັນຜູ້ບໍ່ເອື້ອເຟື້ອ ສົງຄ໌ຍັງບໍ່ຮັບຮອງ ຍັງບໍ່ໄດ້ທຳພິກສຸຜູ້ມີສັງວາສສະເມີກັນໃຫ້ເປັນສະຫາຍ ແມ່ເຈົ້າຢ່າປະພຶດຕາມພິກສຸນັ້ນ” ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒ ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສະລະໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສະລະ

ຕ້ອງອາບັຕິທຸກກະຕະ ພິກສຸນີທັງຫລາຍໄດ້ຍິນບໍ່ວ່າກ່າວຕັກເຕືອນ ຕ້ອງອາບັຕິທຸກກະຕະ ພິກສຸນີນັ້ນອັນພິກສຸນີທັງຫລາຍຄວນຄຸມຕົວມາສູ່ທ່າມກາງສົງຂ໌ວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ພິກສຸນັ້ນຖືກສົງຂ໌ ພ້ອມພຽງກັນລົງອຸກເຂປນີຍກັມໂດຍທັມ ໂດຍວິນັຍ ໂດຍສັຕຖຸສາສນ໌ ເປັນຜູ້ບໍ່ເອື້ອເຟື້ອສົງຂ໌ຍັງບໍ່ຮັບຮອງ ຍັງບໍ່ໄດ້ທຳພິກສຸຜູ້ມີສັງວາສສເມີກັນໃຫ້ເປັນສະຫາຍ ແມ່ເຈົ້າຢ່າປະພຶດຕາມພິກສຸນັ້ນ" ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໔ ຄວນວ່າກ່າວຕັກເຕືອນທ່ານ ແມ່ນຄັ້ງທີ ໓ ຖ້າທ່ານສລະໄດ້ ນັ້ນເປັນການດີ ຖ້າທ່ານບໍ່ສລະ ຕ້ອງອາບັຕິທຸກກະຕະ ພິກສຸນີນັ້ນອັນພິກສຸນີສົງຂ໌ຄວນສວດສມນຸພາສນ໌

**ໝາຍເຫດ :**

໑ ມີສັງວາສສເມີກັນ ຄືມີກັມທີ່ທຳຮ່ວມກັນມີອຸທເທສທີ່ສວດຮ່ວມກັນແລະມີສິກຂາສເມີກັນ (ດູ ຂໍ້ ໖໕໘,໖໖໖, ໖໗໑ ແລະຂໍ້ ໖໗໖ ຫນ້າ ໗,໑໔,໑໘,໔໓, ວິ. ອ. ໔/໖໖໙-໖໗໐/໔໖໖)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ປາຣາຊິກສິກຂາບທທີ່ ໓ ສິກຂາບທວິພັງຄ໌**

ທັງຫລາຍໄດ້ຍິນບໍ່ວ່າກ່າວຕັກເຕືອນ ຕ້ອງອາບັຕິທຸກກະຕະ ພິກສຸນີນັ້ນອັນພິກສຸນີທັງຫລາຍເພິ່ງຄຸມຕົວມາສູ່ທ່າມກາງສົງຂ໌ວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ພິກສຸນັ້ນຖືກສົງຂ໌ພ້ອມພຽງກັນລົງອຸກເຂປນີຍກຣຣມໂດຍທຣຣມ ໂດຍວິນັຍ ໂດຍສັຕຖຸສາສນ໌ ເປັນຜູ້ບໍ່ເອື້ອເຟື້ອ ສົງຂ໌ຍັງບໍ່ຮັບຮອງ ຍັງບໍ່ໄດ້ທຳພິກສຸຜູ້ມີສັງວາສສເມີກັນໃຫ້ເປັນສຫາຍ ແມ່ເຈົ້າຢ່າປະພຶດຕາມພິກສຸນັ້ນ" ເພິ່ງວ່າກ່າວຕັກເຕືອນເຈົ້າ ແມ່ນຄັ້ງທີ ໔ ເພິ່ງວ່າກ່າວຕັກເຕືອນເຈົ້າແມ່ນຄັ້ງທີ່ ໓ ຖ້າເຈົ້າສລະໄດ້ ນັ້ນເປັນການດີ ຖ້າເຈົ້າບໍ່ສລະ ຕ້ອງອາບັຕິທຸກກະຕະ
ພິກສຸນີນັ້ນອັນພິກສຸນີສົງຂ໌ເພິ່ງສວດສມນຸພາສນ໌

**ວິທີສວດສມນຸພາສນ໌ແລະກັມວາຈາສວດສມນຸພາສນ໌**

ພິກສຸທັງຫລາຍ ພິກສຸນີສົງຂ໌ຄວນສວດສມນຸພາສນ໌ພິກສຸນີນັ້ນຢ່າງນີ້ ຄື ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຂ໌ຊາບດ້ວຍຍັຕຕິຈຕຸຕຖກັມວາຈາວ່າ

[໖໗໑] "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີຊື່ນີ້ປະພຶດຕາມພິກສຸຜູ້ຖືກສົງຂ໌ພ້ອມພຽງກັນ ລົງອຸກເຂປນີຍກັມໂດຍທັມ ໂດຍວິນັຍ ໂດຍສັຕຖຸສາສນ໌ ເປັນຜູ້ບໍ່ເອື້ອເຟື້ອ ສົງຂ໌ຍັງບໍ່ຮັບຮອງ ຍັງບໍ່ໄດ້ທຳພິກສຸຜູ້ມີສັງວາສສເມີກັນໃຫ້ເປັນສະຫາຍ ທ່ານບໍ່ສລະເຣື່ອງນັ້ນ ຖ້າສົງຂ໌ພ້ອມກັນ

ແລ້ວຄວນສູອດສູມນຸພາສູນ໌ພິກສຸນີຊື່ນີ້ເພື່ອໃຫ້ສູລະເຣື້ອງນັ້ນ ນີ້ເປັນຍັຕຕິ໑ ແມ່ເຈົ້າ ຂໍສົງຂ໌ຈົ່ງ ຟັງຂ້າພະເຈົ້າ ພິກສຸນີນີ້ປະພຶດຕາມພິກສຸຜູ້ຖືກສົງຂ໌ພ້ອມພຽງກັນລົງອຸກເຂປນີຍກັມໂດຍທັມ ໂດຍ ວິນັຍ ໂດຍສັຕຖຸສາສູນ໌ ເປັນຜູ້ບໍ່ເອື້ອເຟື້ອ ສົງຂ໌ຍັງບໍ່ຮັບຮອງ ຍັງບໍ່ໄດ້ທຳພິກສຸຜູ້ມີສັງອາສູສູ ເມີກັນໃຫ້ເປັນສະຫາຍ ທ່ານບໍ່ສູລະເຣື້ອງນັ້ນ ສົງຂ໌ສູອດສູມນຸພາສູນ໌ພິກສຸຊື່ນີ້ເພື່ອໃຫ້ສູລະເຣື້ອງ ນັ້ນ ແມ່ເຈົ້າຮູບໃດເຫັນດ້ວຍກັບກາຣສູອດສູມນຸພາສູນ໌ພິກສຸນີນີ້ເພື່ອໃຫ້ສູລະເຣື້ອງນັ້ນ ແມ່ເຈົ້າ ຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍແມ່ເຈົ້າຮູບນັ້ນຄວນທັກທ້ວງ ແມ່ນຄັ້ງທີ ໔ ຂ້າ ພະເຈົ້າຂໍກ່າວຄວາມນີ້ ຯລຯ ແມ່ນຄັ້ງທີ ໖ ຂ້າພະເຈົ້າຂໍກ່າວຄວາມນີ້ ຯລຯ

**ໝາຍເຫດ :**

໑ ຍັຕຕິ ຄື ກາຣປະກາດໃຫ້ສົງຂ໌ຊາບເພື່ອທຳກິຈຮ່ວມກັນ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນຫ໌] ປາຣາຊິກສິກຂາບທທີ່ ໖ ບທພາຊນີຍ໌

ພິກສຸນີຊື່ນີ້ສົງຂ໌ສູອດສູມນຸພາສູນ໌ເພື່ອໃຫ້ສູລະເຣື້ອງນັ້ນແລ້ວ ສົງຂ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້" ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິຖຸລລັຈຈັຍ ຈົບກັມວາຈາຄັ້ງສຸດທ້າຍ ຕ້ອງອາບັຕິປາຣາຊິກ

ຄຳວ່າ ພິກສຸນີແມ່ນນີ້ ພຣະຜູ້ມີພຣະພາກຕຣັສູຫຽບຄຽງພິກສຸນີຮູບກ່ອນໆ

ຄຳວ່າ ເປັນປາຣາຊິກ ອະທິບາຍວ່າ ພິກສຸນີຖືກສົງຂ໌ສູອດສູມນຸພາສູນ໌ຈົນຄົບ ໖ ຄັ້ງກໍຍັງບໍ່ຍອມ ສູລະ ທ່ານຍ່ອມບໍ່ເປັນສະມະນະຍິງ ບໍ່ເປັນເຊື້ອສາຍສາກຍທິດາ ປຽບເຫມືອນແຜ່ນສີລາຫນາແຕກ ອອກເປັນ ໔ ປ່ຽງຈະປະສູານໃຫ້ສູນິທເປັນເນື້ອດຽວກັນອີກບໍ່ໄດ້ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະ ພາກຈຶ່ງຕຣັສູວ່າ ເປັນປາຣາຊິກ

ຄຳວ່າ ຫາສັງອາສູບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າສັງອາສູ ໄດ້ແກ່ ກັມທີ່ທຳຮ່ວມກັນອຸທເທສູທີ່ສູອດ ຮ່ວມກັນ ຄວາມມີສິກຂາສູເມີກັນ ນີ້ຊື່ວ່າສັງອາສູ ສັງອາສູນັ້ນບໍ່ມີກັບພິກສຸນີຮູບນັ້ນ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສູວ່າ ຫາສັງອາສູບໍ່ໄດ້

**ບົທພາຊນີຍ໌**

**ຕິກປາຣາຊິກ**

[ຝັ໗໔] ກັມທີ່ທຳຖືກຕ້ອງ໑ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບໍ່ສູລະ ຕ້ອງອາບັຕິປາຣາຊິກ
ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບໍ່ສູລະ ຕ້ອງອາບັຕິປາຣາຊິກ
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບໍ່ສູລະ ຕ້ອງອາບັຕິປາຣາຊິກ

**ໝາຍເຫດ :**

໑ "ກັມທີ່ທຳຖືກຕ້ອງ" ໃນທີ່ນີ້ຫມາຍເຖິງອຸກເຂປນິຍກັມ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນຫ໌] ປາຣາຊິກສິກຂາບົດທີ ໓ ອນາປັຕຕິວາຣ ຕິກທຸກກະຕະ

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິປາຣາຊິກ ຄື

[ຝັ໗໓] ໑. ພິກສຸນີຍັງບໍ່ຖືກສວດສມນຸພາສນ໌
໒. ພິກສຸນີຍອມສູລະ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ປາຣາຊິກສິກຂາບົດທີ ໓ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນຫ໌] ປາຣາຊິກສິກຂາບົດທີ ໔ ນິທານວັຕຖຸ ປາຣາຊິກສິກຂາບົດທີ ໔

ວ່າດ້ວຍວັຕຖຸ ໘ ມີການຍິນດີການຈັບມືຂອງຊາຍເປັນຕົ້ນ

## ເຣື້ອງພິກສຸນີສັພພັຄຄີຍ໌

[ຝົ໗໔] ສູມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນພວກພິກສຸນີສັພພັຄຄີຍ໌ກຳຫນັດ ຍິນດີກາຣຈັບມືແດ່ ຍິນດີກາຣທີ່ຊາຍຜູ້ກຳຫນັດຈັບມຸມສັງຂາຕີແດ່ ຢືນຄຽງຄູ່ກັນກັບຊາຍແດ່ ສົນທນາກັນແດ່ ໄປທີ່ນັດຫມາຍແດ່ ຍິນດີກາຣທີ່ຊາຍມາຫາແດ່ ຍ່າງຕາມເຂົ້າໄປສູ່ທີ່ລັບແດ່ ນ້ອມກາຍເຂົ້າໄປເພື່ອເກືອກກົ້ວກັນດ້ວຍກາຍນັ້ນເພື່ອຈະເສພອສັທທັມນັ້ນດ໌ກັບຊາຍຜູ້ກຳຫນັດແດ່ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພວກພິກສຸນີສັພພັຄຄີຍ໌ຈຶ່ງກຳຫນັດຍິນດີກາຣຈັບມືແດ່ ຍິນດີກາຣທີ່ຊາຍຜູ້ກຳຫນັດຈັບມຸມສັງຂາຕີແດ່ ຢືນຄຽງຄູ່ກັນກັບຊາຍແດ່ ສົນທນາກັນແດ່ ໄປທີ່ນັດຫມາຍແດ່ ຍິນດີກາຣທີ່ຊາຍມາຫາແດ່ ຍ່າງຕາມເຂົ້າໄປສູ່ທີ່ລັບແດ່ ນ້ອມກາຍເຂົ້າໄປເພື່ອເກືອກກົ້ວກັນດ້ວຍກາຍນັ້ນ ເພື່ອຈະເສພອສັທທັມກັບຊາຍຜູ້ກຳຫນັດແດ່ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນ ໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ກຳຫນັດຍິນດີກາຣຈັບມືແດ່ ຍິນດີກາຣທີ່ຊາຍຜູ້ກຳຫນັດຈັບມຸມສັງຂາຕີແດ່ ຢືນຄຽງຄູ່ກັນກັບຊາຍແດ່ ສົນທນາກັນແດ່ ໄປທີ່ນັດຫມາຍແດ່ ຍິນດີກາຣທີ່ຊາຍມາຫາແດ່ ຍ່າງຕາມເຂົ້າໄປສູ່ທີ່ລັບແດ່ ນ້ອມກາຍເຂົ້າໄປເພື່ອ ເກືອກກົ້ວກັນດ້ວຍກາຍນັ້ນເພື່ອຈະເສພອສັທທັມກັບຊາຍຜູ້ກຳຫນັດແດ່ ແມ່ນແທ້ບໍ່" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ ມີຄວາມກຳຫນັດຍິນດີກາຣຈັບມືແດ່ ຍິນດີກາຣທີ່ຊາຍຜູ້ກຳຫນັດຈັບມຸມສັງຂາຕີແດ່ ຢືນຄຽງຄູ່ກັນກັບຊາຍແດ່ ສົນທນາກັນແດ່ ໄປທີ່ນັດຫມາຍແດ່ ຍິນດີກາຣທີ່ຊາຍມາຫາແດ່ ຍ່າງຕາມເຂົ້າໄປສູ່ທີ່ລັບແດ່ ນ້ອມກາຍເຂົ້າໄປເພື່ອເກືອກກົ້ວກັນດ້ວຍກາຍນັ້ນເພື່ອຈະເສພອສັທທັມກັບຊາຍຜູ້ກຳຫນັດແດ່ລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໖໗໕] ກໍພິກຂຸນີໃດກຳຫນັດຄວນຍິນດີການຈັບມື ຍິນດີການທີ່ຊາຍຜູ້ກຳຫນັດຈັບມຸມສັງຂາຕີ ຢືນຄຽງຄູ່ກັນກັບຊາຍ ສົນທນາກັນ ໄປທີ່ນັດຫມາຍ ຍິນດີການທີ່ຊາຍມາຫາ ຍ່າງຕາມເຂົ້າໄປສູ່ທີ່ລັບ ຫລືນ້ອມກາຍເຂົ້າໄປເພື່ອເກືອກກົ້ວກັນດ້ວຍກາຍນັ້ນ ເພື່ອຈະເສພອສັທທັມ໑ນັ້ນກັບຊາຍຜູ້ກຳຫນັດ ແມ່ນພິກຂຸນີນີ້ເປັນປາຣາຊິກຊື່ອັຕຖວັຕຖຸກາ໘ ຫາສັງວາສບໍ່ໄດ້

ເຣື່ອງພິກຂຸນີສັພພັຄຄີຍ໌ ຈົບ

**ສິກຂາບົທວິພັງຄ໌**

[໖໗໖] ຄຳວ່າ ກໍ. . . ໃດ ຄືຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມຫມາຍນີ້

**ໝາຍເຫດ :**
໑ "ອສັທທັມ" ໃນທີ່ນີ້ຫມາຍເຖິງການຖືກຕ້ອງກັນທາງກາຍ ບໍ່ແມ່ນເມຖຸນທັມ (ວິ. ອ. ໔/໖໗໕/໔໖໗)
໘ ຄຳວ່າ "ອັຕຖວັຕຖຸກາ" ແປວ່າ ວັຕຖຸ ເຫຕຸ ຫລືກໍຣະນີ ໘ ຢ່າງ ເປັນຊື່ຣຽກພິກຂຸນີຜູ້ຕ້ອງອາບັຕິປາຣາຊິກ ສິກຂາບົທນີ້ ເມື່ອທຳຄົບ ໘ ຢ່າງຄື (໑) ຍິນດີການຈັບມື (໒) ຍິນດີການຈັບມຸມສັງຂາຕີ (໓) ຢືນ ຄຽງຄູ່ (໔) ສົນທນາກັນ (໕) ໄປທີ່ນັດຫມາຍ (໖) ຍິນດີທີ່ເຂົາມາຫາ (໗) ຍ່າງຕາມເຂົ້າໄປສູ່ທີ່ລັບ (໘) ນ້ອມກາຍເຂົ້າເພື່ອຈະເສພອສັທທັມກັບຊາຍຜູ້ກຳຫນັດ (ວິ. ອ. ໔/໖໗໖/໔໖໘)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ປາຣາຊິກສິກຂາບທທີ່ ໔ ສິກຂາບທວິພັງຄ໌**

ທີ່ຊື່ວ່າ ກຳຫນັດ ໄດ້ແກ່ ພິກຂຸນີມີຄວາມຍິນດີ ເພ່ງເລັງ ມີຈິຕຮັກໃຄ່
ທີ່ຊື່ວ່າ ຜູ້ກຳຫນັດ ໄດ້ແກ່ ຊາຍມີຄວາມຍິນດີ ເພ່ງເລັງ ມີຈິຕຮັກໃຄ່

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນຊາຍທີ່ຮູ້ດຽງສາ ສາມາດຖືກຕ້ອງກາຍໄດ້

ຄຳວ່າ ຍິນດີກາຣຈັບມື ຄວາມວ່າ ທີ່ຊື່ວ່າ ມື ໝາຍເອົາຕັ້ງແຕ່ຂໍ້ສອກເຖິງປາຍເລັບ ພິກສຸນີຍິນດີກາຣຈັບອວັຍວະບໍຣິເວນເໜືອຣາກຂວັນຂຶ້ນໄປ ໃຕ້ເຂົ່າລົງມາ ເພື່ອຈະເສພອສັທທັມນັ້ນ ຕ້ອງອາບັຕິຖຸລລັຈຈັຍ

ຄຳວ່າ ຍິນດີກາຣ. . . ຈັບນຸ່ມສັງຂາຕິ ຄື ຍິນດີກາຣຈັບຜ້ານຸ່ງຫລືຜ້າຫົ່ມເພື່ອຈະເສພອສັທທັມນັ້ນ ຕ້ອງອາບັຕິຖຸລລັຈຈັຍ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນຣະຍະຊ່ວງແຂນຂອງຊາຍເພື່ອຈະເສພອສັທທັມນັ້ນ ຕ້ອງອາບັຕິຖຸລລັຈຈັຍ

ຄຳວ່າ ສົນທນາກັນ ຄື ຢືນສົນທນາຢູ່ໃນຣະຍະຊ່ວງແຂນຂອງຊາຍເພື່ອຈະເສພອສັທທັມນັ້ນ ຕ້ອງອາບັຕິຖຸລລັຈຈັຍ

ຄຳວ່າ ໄປທີ່ນັດໝາຍ ຄວາມວ່າ ພິກສຸນີທີ່ຊາຍສັ່ງວ່າ "ຈົ່ງມາຍັງທີ່ຊື່ນີ້" ແລ້ວໄປເພື່ອຈະເສພອສັທທັມນັ້ນ ຕ້ອງອາບັຕິທຸກກະຕະທຸກໆຍ່າງ ພໍຍ່າງເຂົ້າຣະຍະຊ່ວງແຂນຂອງຊາຍ ຕ້ອງອາບັຕິຖຸລລັຈຈັຍ

ຄຳວ່າ ຍິນດີກາຣທີ່ຊາຍມາຫາ ຄວາມວ່າ ຍິນດີກາຣທີ່ຊາຍມາເພື່ອຈະເສພອສັທທັມ ຕ້ອງອາບັຕິທຸກກະຕະ ພໍຍ່າງເຂົ້າຣະຍະຊ່ວງແຂນ ຕ້ອງອາບັຕິຖຸລລັຈຈັຍ

ຄຳວ່າ ຍ່າງຕາມເຂົ້າໄປສູ່ທີ່ລັບ ຄວາມວ່າ ພໍຍ່າງເຂົ້າສະຖານທີ່ທີ່ປົກປິດດ້ວຍວັຕຖຸຢ່າງໃດຢ່າງນຶ່ງ ເພື່ອຈະເສພອສັທທັມນັ້ນ ຕ້ອງອາບັຕິຖຸລລັຈຈັຍ

ຄຳວ່າ ຫລືນ້ອມກາຍເຂົ້າໄປເພື່ອເກືອກກົ້ວກັນດ້ວຍກາຍນັ້ນ ຄວາມວ່າ ຢູ່ໃນຣະຍະຊ່ວງແຂນຂອງຊາຍ ນ້ອມກາຍເຂົ້າໄປເພື່ອຈະເສພອສັທທັມນັ້ນ ຕ້ອງອາບັຕິຖຸລລັຈຈັຍ

ຄຳວ່າ ແມ່ນພິກສຸນີນີ້ ພຣະຜູ້ມີພຣະພາກຕຣັສຫຽບຄຽງພິກສຸນີຮູບກ່ອນໆ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ປາຣາຊິກສິກຂາບທທີ່ ໔ ອນາປັຕຕິວາຣ

ຄຳວ່າ ເປັນປາຣາຊິກ ອະທິບາຍວ່າ ພິກສຸນີເມື່ອທຳວັຕຖຸຄົບທັງ ໘ ປະກາຣຍ່ອມບໍ່ເປັນສະມະນະຍິງ ບໍ່ເປັນເຊື້ອສາຍສາກຍທິດາ໑ ປຽບເໝືອນຕົ້ນຕາລຍອດກຸ້ນທີ່ບໍ່ອາຈງອກໄດ້ຕໍ່ໄປ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ເປັນປາຣາຊິກ

ຄຳວ່າ ຫາສັງວາສບໍ່ໄດ້ ອະທິບາຍວ່າ ທີ່ຊື່ວ່າສັງວາສ ໄດ້ແກ່ ກັມທີ່ທຳຮ່ວມກັນອຸທເທສທີ່ສວດ

ຮ່ວມກັນ ຄວາມມີສິກຂາສເມີກັນ ນີ້ຊື່ວ່າສັງວາສ ສັງວາສນັ້ນບໍ່ມີກັບພິກສຸນີຮູບນັ້ນ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ຫາສັງວາສບໍ່ໄດ້

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[ຝົກໆ] ໑. ພິກສຸນີບໍ່ຈິງໃຈ

໒. ພິກສຸນີບໍ່ມີສຕິ

**ໝາຍເຫດ :**

໑ ເມື່ອພິກສຸນີລ່ວງລະເມີດແຕ່ລະວັຕຖຸ ຕ້ອງອາບັຕິເລັກນ້ອຍດັ່ງນີ້

໑. ໃນຂນະທີ່ຍ່າງທາງໄປທີ່ນັດຫມາຍ ຕ້ອງອາບັຕິທຸກກະຕະທຸກໆຍ່າງກ້າວ ພອກ້າວເຂົ້າສູ່ຫັຕຖບາສ(ຣະຍະຊ່ວງແຂນ)ຂອງຊາຍ ຕ້ອງອາບັຕິຖຸລລັຈຈັຍ

໒. ຍິນດີກາຣທີ່ຊາຍມາ ຕ້ອງອາບັຕິທຸກກະຕະ ພອຊາຍກ້າວເຂົ້າສູ່ຫັຕຖບາສ ຕ້ອງອາບັຕິຖຸລລັຈຈັຍ ສ່ວນວັຕຖຸທີ່ເຫລືອອີກ ຝ ຄື ໑. ຍິນດີກາຣຈັບມື ໒. ຍິນດີກາຣຈັບມຸມສັງຂາຕິ ๓. ຢືນຄຽງຄູ່ກັນ ໔. ສົນທນາກັນ ໕. ຕາມເຂົ້າໄປສູ່ທີ່ລັບ ຝ. ນ້ອມກາຍເຂົ້າໄປເພື່ອຈະເສພອສັທທັມ ປັບອາບັຕິຖຸລລັຈຈັຍເທົ່ານັ້ນສຳລັບແຕ່ລະວັຕຖຸ ພິກສຸນີຕ້ອງອາບັຕິຖຸລລັຈຈັຍເພາະລ່ວງລະເມີດແຕ່ລະວັຕຖຸແລ້ວ ບໍ່ຄິດຈະສລັດຖິ້ມ ໂດຍຄິດວ່າ "ເຮົາຈະຕ້ອງອາບັຕິແນ່ນເພາະວັຕຖຸອື່ນອີກ" ແມ່ນຈະສະແດງ(ປລົງ)ອາບັຕິກໍບໍ່ເປັນອັນສະແດງ ອາບັຕິນັ້ນຍັງສະສົມຢູ່ ເມື່ອຕ້ອງອາບັຕິຖຸລລັຈຈັຍເພາະລ່ວງລະເມີດວັຕຖຸອື່ນໆກໍເປັນກາຣສະສົມອາບັຕິເລື້ອຍໄປ ພໍເມື່ອລ່ວງລະເມີດຄົບວັຕຖຸທັງ ໘ ຕ້ອງອາບັຕິປາຣາຊິກ ແຕ່ຖ້າພິກສຸນີນັ້ນລ່ວງລະເມີດວັຕຖຸໃດວັຕຖຸນຶ່ງແລ້ວ ຄິດສລັດຖິ້ມໄປວ່າ "ບັດນີ້ເຮົາຈັກບໍ່ຕ້ອງອາບັຕິ"

ແລ້ວສະແດງ(ປລົງ)ອາບັຕິ ອາບັຕິຖຸລລັຈຈັຍນັ້ນຍ່ອມຕົກໄປ ບໍ່ສະສົມຢູ່ ແມ່ນຈະລ່ວງລະເມີດວັຕຖຸອື່ນໆອີກຈົນຄົບທັງ ໘ ກໍບໍ່ຕ້ອງອາບັຕິປາຣາຊິກ ເພາະທ່ານທຳກາຣສລັດຖິ້ມໂດຍສະແດງ(ປລງ)ອາບັຕິທຸກຄັ້ງທີ່ລ່ວງລະເມີດວັຕຖຸແຕ່ລະຢ່າງ (ວິ. ອ. ໒/ຝົ໗ຝ/໔ຝ໘, ກັງຂາ. ອ. ๓໔໕-๓໔ຝ)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ປາຣາຊິກກັນທ໌] ບທສຣຸປ**

໓. ພິກສຸນີຜູ້ບໍ່ຮູ້
໔. ພິກສຸນີຜູ້ບໍ່ຍິນດີ
໕. ພິກສຸນີວິກົລຈິຕ
໖. ພິກສຸນີຈິຕປັ່ນປ່ວງ
໗. ພິກສຸນີກະວົນກະວາຍເພາະເວທນາ
໘. ພິກສຸນີຕົ້ນບັນຍັດ

ປາຣາຊິກສິກຂາບົດທີ ໔ ຈົບ

**ບົທສຣຸບ**
ແມ່ເຈົ້າທັງຫລາຍ ຫົມຄືປາຣາຊິກ ໘ ສິກຂາບົທ໑ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວແຕ່ລະຂໍ້ງຊຶ່ງພິກສຸນີຕ້ອງເຂົ້າແລ້ວຍ່ອມຢູ່ຮ່ວມກັບພິກສຸນີທັງຫລາຍບໍ່ໄດ້ ເປັນປາຣາຊິກຫາສັງວາສບໍ່ໄດ້ເຫມືອນເມື່ອກ່ອນບວຊ ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫລາຍໃນຫົມຄືປາຣາຊິກ ໘ ສິກຂາບົທນັ້ນວ່າ "ແມ່ເຈົ້າທັງຫລາຍບໍຣິສຸດຫົ໌ແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດຫົ໌ແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດຫົ໌ແລ້ວຫລື" ແມ່ເຈົ້າທັງຫລາຍບໍຣິສຸດຫົ໌ແລ້ວໃນຫົມຄືປາຣາຊິກ ໘ ສິກຂາບົທນີ້ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

ປາຣາຊິກກັນຫ໌ໃນພິກຂຸນີວິພັງຄ໌ ຈົບ

**ໝາຍເຫດ :**
໑ ປາຣາຊິກຂອງພິກສຸນີທີ່ເຫລືອອີກ ໔ ສິກຂາບົທ ມີເນື້ອຄວາມເຫມືອນກັນກັບປາຣາຊິກ ໔ ສິກຂາບົທຂອງພິກສຸ ສະນັ້ນຈຶ່ງຣວມເປັນ ໘ ສິກຂາບົທ (ດູ ວິນັຍປິດົກແປລ ເຫລັ້ມ ໑/໔໔/໓໒,ໞ໑/໘໐,໑໗໑/໑໔໐-໑,໑ໞ໗/໑໘໓)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໒. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບທທີ່ ໑ ນິທານວັຕຖຸ**

໔. ສັງຂາທິເສສກັນທ໌ ແມ່ເຈົ້າທັງຫລາຍ ທັມຄືສັງຂາທິເສສ ໑໗ ສິກຂາບົທເຫລົ່ານີ້ມາເຖິງອາຣະ ທີ່ຈະຍົກຂື້ນສະແດງເປັນຂໍ້ໆຕາມລຳດັບ

**ສັງຂາທິເສສສິກຂາບົດທີ ໑**

ວ່າດ້ວຍການກໍ່ຄະດີພິພາທ

**ເຣື້ອງອຸບາສິກກັບພິກສຸນີຖຸລລະນັນທາ**

[໕໗໘] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ອຸບາສິກຄົນນຶ່ງຖວາຍໂຮງເກັບຂອງແກ່ພິກສຸນີສົງຂ໌ແລ້ວເຖິງ ແກ່ກັມ ເຂົາມີບຸດຣ ໔ ຄົນ ຄົນນຶ່ງບໍ່ມີສັດທາບໍ່ເຫລື້ອມໃສອີກຄົນນຶ່ງມີສັດທາເຫລື້ອມໃສ ບຸດຣ ທັງສອງແບ່ງສົມບັດຂອງບິດາ ບຸດຣຄົນທີ່ບໍ່ມີສັດທາບໍ່ເຫລື້ອມໃສໄດ້ກ່າວກັບບຸດຣຄົນທີ່ມີສັດທາ ເຫລື້ອມໃສນັ້ນດັ່ງນີ້ວ່າ "ພວກເຮົາຍັງມີໂຮງເກັບຂອງຢູ່ ເອົາໂຮງເກັບຂອງນີ້ມາແບ່ງກັນ ເຖີດ" ເມື່ອເຂົາກ່າວຢ່າງນັ້ນ ບຸດຣຄົນທີ່ມີສັດທາເຫລື້ອມໃສໄດ້ກ່າວກັບບຸດຣຄົນທີ່ບໍ່ມີສັດທາບໍ່ເຫລື້ອມ ໃສດັ່ງນີ້ວ່າ "ທ່ານຢ່າໄດ້ກ່າວຢ່າງນີ້ ບິດາຂອງພວກເຮົາຖວາຍໂຮງເກັບຂອງໃຫ້ພິກສຸນີສົງຂ໌ແລ້ວ" ບຸດຣຄົນທີ່ບໍ່ມີສັດທາບໍ່ເຫລື້ອມໃສໄດ້ກ່າວກັບບຸດຣຄົນມີສັດທາເຫລື້ອມໃສນັ້ນແມ່ນຄັ້ງທີ ໒ ດັ່ງ ນີ້ວ່າ "ພວກເຮົາຍັງມີໂຮງເກັບຂອງຢູ່ ເອົາມັນມາແບ່ງກັນເຖີດ" ບຸດຣຄົນທີ່ມີສັດທາເຫລື້ອມ ໃສກໍກ່າວກັບບຸດຣຄົນທີ່ບໍ່ມີສັດທາບໍ່ເຫລື້ອມໃສດັ່ງນີ້ວ່າ "ທ່ານຢ່າໄດ້ກ່າວຢ່າງນີ້ ບິດາຂອງພວກ ເຮົາຖວາຍໂຮງເກັບຂອງໃຫ້ພິກສຸນີສົງຂ໌ແລ້ວ" ບຸດຣຄົນທີ່ບໍ່ມີສັດທາບໍ່ເຫລື້ອມໃສກ່າວກັບ ບຸດຣຄົນທີ່ມີສັດທາເຫລື້ອມໃສແມ່ນຄັ້ງທີ ໓ ວ່າ "ພວກເຮົາຍັງມີໂຮງເກັບຂອງຢູ່ ເອົາມັນມາແບ່ງ ກັນເຖີດ" ຕໍ່ມາ ບຸດຣຄົນທີ່ມີສັດທາເຫລື້ອມໃສຄິດວ່າ ຖ້າເຮົາໄດ້ໂຮງເກັບຂອງກໍຈັກຖວາຍພິກສຸນີ ສົງຂ໌ຈຶ່ງກ່າວກັບບຸດຣຄົນທີ່ບໍ່ມີສັດທາບໍ່ເຫລື້ອມໃສດັ່ງນີ້ວ່າ "ຕົກລົງ ເຮົາຈະແບ່ງມໍຣະດົກກັນ"

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບທທີ່ ໑ ນິທານ ວັຕຖຸ**

ຄັ້ງນັ້ນ ເມື່ອທັງສອງກຳລັງແບ່ງກັນຢູ່ ໂຮງເກັບຂອງຕກເປັນສົມບັດຂອງບຸດຣຄົນທີ່ບໍ່ມີສັດທາບໍ່ ເຫລື້ອມໃສ ຕໍ່ມາ ບຸດຣຄົນທີ່ບໍ່ມີສັດທາບໍ່ເຫລື້ອມໃສໄດ້ເຂົ້າໄປຫາພິກສຸນີທັງຫລາຍແລ້ວ ໄດ້ກ່າວດັ່ງນີ້ວ່າ "ເຊີນທ່ານທັງຫລາຍອອກໄປ ໂຮງເກັບຂອງເປັນສົມບັດຂອງຜູ້ຂ້າ" ເມື່ອເຂົາກ່າ ວຢ່າງນີ້ ພິກສຸນີຖຸລລະນັນທາໄດ້ກ່າວກັບບຸຣຸສນັ້ນດັ່ງນີ້ວ່າ "ທ່ານຢ່າໄດ້ກ່າວຢ່າງນີ້ ບິດາຂອງທ່ານ

ຖວາຍໂຮງເກັບຂອງໃຫ້ພິກສຸນີສົງຂ໌ແລ້ວ” ທັງສອງຝ່າຍໂຕ້ຖຽງກັນວ່າ ຖວາຍ ບໍ່ໄດ້ຖວາຍ ຈຶ່ງພາກັນໄປຟ້ອງພວກມຫາອມາຕຍ໌ຜູ້ພິພາກສາ ພວກມຫາອມາຕຍ໌ຖາມວ່າ “ແມ່ເຈົ້າ ມີໃຜແດ່ທີ່ພໍຈະຮູ້ເຫັນເປັນພຍານໄດ້ວ່າໂຮງເກັບຂອງເຂົາຖວາຍພິກສຸນີສົງຂ໌ແລ້ວ” ເມື່ອພວກມຫາອມາຕຍ໌ກ່າວຢ່າງນີ້ ພິກສຸນີຖຸລລະນັນທາຈຶ່ງໄດ້ກ່າວກັບພວກມຫາອມາຕຍ໌ດັ່ງນີ້ວ່າ “ພວກທ່ານເຄີຍເຫັນຫລືໄດ້ຍິນແດ່ບໍ່ວ່າ ເມື່ອຈະຖວາຍທານຈະຕ້ອງມີພຍານດ້ວຍ” ພວກມຫາອມາຕຍ໌ຕອບວ່າ “ແມ່ເຈົ້າກ່າວຈິງ” ຈຶ່ງຕັດສິນມອບໂຮງເກັບຂອງໃຫ້ພິກສຸນີສົງຂ໌ໄປ ບຸຣຸສນັ້ນເສັຽຄດີ ຈຶ່ງຕໍາຫນິ ປະນາມ ໂພນທະນາວ່າ “ຍິງຊົ່ວຫົວໂລ້ນເຫລົ່ານີ້ບໍ່ແມ່ນສະມະນະຍິງ ຈັ່ງໃດຈຶ່ງໃຫ້ຜູ້ພິພາກສາຮິບເອົາໂຮງເກັບຂອງຂອງເຮົາລະ” ພິກສຸນີຖຸລລະນັນທາບອກເຣື້ອງນັ້ນໃຫ້ພວກມຫາອມາຕຍ໌ຊາບ ພວກມຫາອມາຕຍ໌ໄດ້ປັບສິນໄຫມເຂົາ ບຸຣຸສນັ້ນຖືກປັບຈຶ່ງໃຫ້ສ້າງທີ່ພັກອາຊີວກ໑ ໄວ້ໃກ້ທີ່ຢູ່ພິກສຸນີແລ້ວສັ່ງອາຊີວກວ່າ “ພວກທ່ານຈົ່ງຊ່ອຍກັນເອົ້າຕະໂກນໃສ່ພິກສຸນີເຫລົ່ານີ້” ພິກສຸນີຖຸລລະນັນທາຈຶ່ງບອກເຣື້ອງນັ້ນໃຫ້ພວກມຫາອມາຕຍ໌ຊາບ ພວກມຫາອມາຕຍ໌ສັ່ງໃຫ້ຈັບບຸຣຸສນັ້ນຈອງຈໍາໄວ້ພວກຊາວບ້ານພາກັນຕໍາຫນິ ປະນາມ ໂພນທະນາວ່າ “ຄັ້ງແຣກພວກພິກສຸນີໃຫ້ເຈົ້າຫນ້າທີ່ຮິບເອົາໂຮງເກັບຂອງ ຄັ້ງທີ ໒ ໃຫ້ປັບສິນໄຫມ ຄັ້ງທີ ໓ ໃຫ້ຈອງຈໍາ ຄາວນີ້ເຫັນທີຈະສັ່ງຂ້າ”

**ຫມາຍເຫດ :**

໑ ຄໍາວ່າ “ອາຊີວກ” ເປັນຄໍາຮຽກນັກບວຊຊີເປືອຍພວກນຶ່ງໃນຄັ້ງພຸທທກາລ ເປັນສາວົກຂອງມັກຂລິໂຄສາລ (ເບິ່ງ ທີຂນິກາຍ ສີລຂັນວັຄ ແປລ ໙/໑໕໗-໑໕໙/໕໔-໕໕)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບທທີ່ ໑ ສິກຂາບທວິພັງຄ໌

ພິກສຸນີທັງຫລາຍໄດ້ຍິນຊາວບ້ານຕໍາຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ “ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງມັກກໍ່ຄດີພິພາທລະ” ລໍາດັບນັ້ນ ພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື້ອງນີ້ໄປຊາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ

ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາເປັນຜູ້ມັກກໍ່ຄດີພິພາທ ແມ່ນແທ້ບໍ" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດຫຼະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດຫຼະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງເປັນຜູ້ມັກກໍ່ຄດີພິພາທລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໕໗໙] ກໍພິກສຸນີໃດກໍ່ຄດີພິພາທກັບຄຫບໍດີ ກັບບຸຕຣຄຫບໍດີ ກັບທາສ ຫລືກັບກັມກອນ ໂດຍທີ່ສຸດຈົນເມື່ອກັບສະມະນະປຣິພາຊກ ພິກສຸນີນີ້ຕ້ອງທັມຄື ສັງຂາທິເສສທີ່ຊື່ວ່າປຖມາປັຕຕິກະ ນິສສາຣນີຍະ໑

ເຣື້ອງອຸບາສົກກັບພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໕໘໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

**ໝາຍເຫດ :**

໑ ຄຳວ່າ "ປຖມາປັຕຕິກະ ນິສສາຣນີຍະ" ເປັນຊື່ສະເພາະຂອງທັມຄືອາບັຕິສັງຂາທິເສສທີ່ຕ້ອງໃນທັນທີທີ່ລ່ວງລະເມີດ ໂດຍບໍ່ມີການສວດສມນຸພາສນ໌ ແລະພິກສຸນີທີ່ຕ້ອງອາບັຕິສັງຂາທິເສສຕ້ອງຖືກໄລ່ອອກຈາກພິກສຸນີສົງຂ໌ (ວິ. ອ. ໔/໕໗໙/໔໗໑)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບທທີ່ ໑ ສິກຂາບທວິພັງຄ໌

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ກໍ່ຄດີພິພາທ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຜູ້ກໍ່ຄດີ

ທີ່ຊື່ວ່າ ຄຫບໍດີ ໄດ້ແກ່ ຊາຍຜູ້ຄອງເຮືອນຄົນໃດຄົນນຶ່ງ
ທີ່ຊື່ວ່າ ບຸຕຣຄຫບໍດີ ໄດ້ແກ່ ບຸຕຣແລະພີ່ນ້ອງຊາຍຄົນໃດຄົນນຶ່ງ
ທີ່ຊື່ວ່າ ທາສ ໄດ້ແກ່ ທາສໃນເຮືອນເບັ້ຽ ທາສນໍ້າເງິນ ທາສຊະເລີຍ
ທີ່ຊື່ວ່າ ກັມກອນ ໄດ້ແກ່ ຄົນຮັບຈ້າງຊົ່ວຄາວ ຄົນງານປະຈໍາ
ທີ່ຊື່ວ່າ ສະມະນະປຣິພາຊກ ໄດ້ແກ່ ນັກບວຊຄົນໃດຄົນນຶ່ງຢູ່ໃນລັທທິປຣິພາຊກ ຍົກເວັ້ນພິກສຸ ພິກສຸນີ ສິກຂມານາ ສາມເນຣ ແລະສາມເນຣີ ພິກສຸນີແສວງຫາເພື່ອນຫລືຍ່າງໄປດ້ວຍຕັ້ງໃຈວ່າ "ຈະກໍ່ຄດີ ຕ້ອງອາບັຕິທຸກກະຕະ ບອກເຣື້ອງຂອງຄົນນຶ່ງ(ແກ່ຕຸລາການ) ຕ້ອງອາບັຕິທຸກກະຕະ ບອກເຣື້ອງຂອງຄົນທີ່ສອງ ຕ້ອງອາບັຕິຖຸລລັຈຈັຍ ເມື່ອສາລຕັດສິນແລ້ວ ຕ້ອງອາບັຕິສັງຂາທິເສສ
ຄໍາວ່າ ປຖມາປັຕຕິກະ ຄື ຕ້ອງອາບັຕິພ້ອມກາຣລ່ວງລະເມີດວັຕຖຸໂດຍບໍ່ຕ້ອງສວດສມນຸພາສນ໌
ຄໍາວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກຫມູ່
ຄໍາວ່າ ສັງຂາທິເສສ ຄວາມວ່າ ສໍາລັບອາບັຕິນັ້ນສົງຂ໌ເທົ່ານັ້ນໃຫ້ມານັຕ ຊັກເຂົ້າຫາອາບັຕິເດີມ ຮຽກເຂົ້າຫມູ່໑ ພິກສຸນີຫລາຍຮູບກໍທໍາບໍ່ໄດ້ ພິກສຸນີຮູບດຽວກໍທໍາບໍ່ໄດ້ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ
ຄໍາວ່າ ສັງຂາທິເສສ ນີ້ເປັນກາຣຂນານນາມ ເປັນຄໍາຮຽກຫມວດອາບັຕິນັ້ນນັ້ນເອງ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ໔

**ໝາຍເຫດ :**

໑ "ຊັກເຂົ້າຫາອາບັຕິເດີມ" ຄືມູລປຕິກັສສນາ "ຮຽກເຂົ້າຫມູ່" ຄືອັພພານ
໔ ສັງຂາທິເສສນີ້ເປັນຊື່ຮຽກກອງອາບັຕິ ແປວ່າ "ຫມູ່ອາບັຕິທີ່ຕ້ອງກາຣສົງຂ໌ທັງໃນຣະຍະເບື້ອງຕົ້ນແລະໃນຣະຍະທີ່ເຫລືອ" ຫມາຍຄວາມວ່າ ພິກສຸນີຜູ້ຕ້ອງອາບັຕິສັງຂາທິເສສຈະອອກຈາກອາບັຕິນັ້ນໄດ້ຕ້ອງອາສັຍສົງຂ໌ໃຫ້ມານັຕ(ປັກຂມານັຕ) ຊັກເຂົ້າຫາອາບັຕິເດີມແລະອັພພານ(ຮຽກເຂົ້າຫມູ່) ໃນກັມທັງຫມົດນີ້ ຂາດສົງຂ໌ເສັ້ຽແລ້ວ ກໍທໍາບໍ່ໄດ້ສໍາເຣັຈ ພິກສຸນີຜູ້ຈະອອກຈາກອາບັຕິສັງຂາທິເສສ ນັ້ນແມ່ນຈະປິດອາບັຕິໄວ້ກໍບໍ່ຕ້ອງຢູ່ປຣິວາສ ປະພຶດປັກຂມານັຕໃນສົງຂ໌ ໔ ຝ່າຍເລີຍທີດຽວ" (ກງຂາ. ອ. ໑໕໕, ດູ ວິ. ມຫາ. ໑/໔໓໗/໔໕໔ ໝາຍເຫດ)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບທທີ່ ໑ ອນາປັຕຕິວາຣ**

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[ຝັງ໑] ໑. ພິກສຸນີຖືກພວກຊາວບ້ານດຶງຕົວໄປ

໒. ພິກສຸນີຂໍອາຮັກຂາ

໓. ພິກສຸນີບອກບໍ່ເຈາະຈົງບຸຄຄົລ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສັງຂາທິເສສສິກຂາບົດທີ ໑ ຈົບ

**ພຣະວິນັຍປີດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບທທີ່ ໔ ນິທານວັຕຖຸ**

**ສັງຂາທິເສສສິກຂາບົດທີ ໔**

ວ່າດ້ວຍການບວຊໃຫ້ສະຕຣີຜູ້ເປັນໂຈຣ

**ເຣື້ອງຊາຍາເຈົ້າລິຈສວິກັບພິກສຸນີຖຸລລະນັນທາ**

[ຝັງ໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ໃນກຸງເວສາລີ ຊາຍາຂອງເຈົ້າລິຈສວິອົງຄ໌ນຶ່ງປະພຶດນອກໃຈພຣະສວາມີ ເຈົ້າລິຈສວິຜູ້ນັ້ນຕຣັສກັບຍິງນັ້ນດັ່ງນີ້ວ່າ "ເອົາລະທ່ານຈົ່ງງົດເວັ້ນ ຖ້າບໍ່ເຊັ່ນນັ້ນຂ້ອຍຈະເຮັດໂທສທ່ານ" ນາງແມ່ນຈະຖືກວ່າກ່າວຢ່າງນີ້ກໍບໍ່ເຊື່ອ ຕໍ່ມາ ຄນະເຈົ້າລິຈສວິໄດ້ປະຊຸມກັນດ້ວຍຣາຊກໍຣະນີຍກິຈບາງຢ່າງ ເຈົ້າລິຈສວິອົງຄ໌ນັ້ນໄດ້ຕຣັສກັບພວກເຈົ້າລິຈສວິດັ່ງນີ້ວ່າ "ທ່ານທັງຫລາຍ ຂໍອນຸຍາຕໃຫ້ ຂະນ້ອຍຈັດການກັບສະຕຣີຄົນນຶ່ງ" ຄນະຖາມວ່າ "ສະຕຣີຜູ້ນັ້ນຄືໃຜ" ເຈົ້າລິຈສວິນັ້ນຕອບວ່າ "ນາງຄືພັຣຍາປະພຶດນອກໃຈຂອງຂ້າພະເຈົ້າ ຂ້າພະເຈົ້າຈັກຂ້ານາງ" ຄນະກ່າວວ່າ "ທ່ານຈົ່ງຮູ້ເອງເຖີດ" ສະຕຣີນັ້ນຊາບຂ່າວວ່າ ສາມີປະສົງຄ໌ຈະຂ້ານາງ ຈຶ່ງເກັບຂອງສຳຄັນໆຫນີໄປຍັງກຸງສາວັຕຖີ ເຂົ້າໄປຫາພວກເດັຍຣະຖີຍ໌ຂໍບວຊ ພວກເດັຍຣະຖີຍ໌ບໍ່ຕ້ອງການບວຊໃຫ້ ນາງຈຶ່ງເຂົ້າໄປຫາພວກພິກສຸນີຂໍບວຊ ພວກພິກສຸນີກໍບໍ່ຕ້ອງການຈະບວຊໃຫ້ ຈຶ່ງເຂົ້າໄປຫາພິກສຸນີຖຸລລະນັນທາອວດຂອງມີຄ່າແລ້ວຂໍບວຊ ພິກສຸນີຖຸລລະນັນທາຮັບເອົາສິ່ງຂອງແລ້ວບວຊ

ໃຫ້ນາງຕໍ່ມາ ເຈົ້າລິຈສວີນັ້ນຊົງຕາມຫາສະຕຣີນັ້ນໄປເຖິງກຸງສາວັຕຖີ ພົບນາງບວດຢູ່ໃນສຳນັກພິກສຸນີ ຈຶ່ງເຂົ້າໄປເຝົ້າພຣະເຈົ້າປເສນທິໂກສົລເຖິງທີ່ປະທັບ ຄັນເຖິງແລ້ວໄດ້ຂາບທູລພຣະເຈົ້າປເສນທິໂກສົລດັ່ງນີ້ວ່າ "ຂໍເດຊະ ຊາຍາຂອງຂະນ້ອຍລັກຂອງມີຄ່າຫນີມາກຸງສາວັຕຖີ ຂໍພຣະອົງຄ໌ຈົ່ງຊົງອນຸຍາຕໃຫ້ຈັບນາງ" ພຣະເຈົ້າປເສນທິໂກສົລຕຣັສວ່າ "ເຊີນທ່ານສືບຫານາງ ພົບແລ້ວຈົ່ງມາບອກ" ເຈົ້າລິຈສວີຂາບທູລວ່າ "ຂະນ້ອຍເຫັນນາງບວດຢູ່ໃນສຳນັກພິກສຸນີ ຂະນ້ອຍ"

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບທທີ່ ໔ ພຣະບັຍຍັຕິ

ພຣະເຈົ້າປເສນທິໂກສົລຕຣັສວ່າ "ຖ້ານາງບວດຢູ່ໃນສຳນັກພິກສຸນີ ໃຜໆກໍເຮັດຫຍັງບໍ່ໄດ້ ພຣະທັມອັນພຣະຜູ້ມີພຣະພາກຕຣັສໄວ້ດີແລ້ວ ຂໍໃຫ້ນາງປະພຶດພຣົມຈັນຍ໌ເພື່ອທຳທີ່ສຸດທຸກຂ໌ໂດຍຊອບເຖີດ" ດັ່ງນັ້ນ ເຈົ້າລິຈສວີນັ້ນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ສະຕຣີຜູ້ເປັນໂຈຣລະ" ພິກສຸນີທັງຫລາຍໄດ້ຍິນເຈົ້າລິຈສວີນັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງບວຊໃຫ້ສະຕຣີຜູ້ເປັນໂຈຣລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາບວຊໃຫ້ສະຕຣີຜູ້ເປັນໂຈຣ ແມ່ນແທ້ບໍ" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງບວຊໃຫ້ສະຕຣີຜູ້ເປັນໂຈຣລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[ຝົກຊົ] ກໍພິກສຸນີໃດຮູ້ຢູ່ບໍ່ບອກພຣະຣາຊາ ສົງຂ໌ ຄນະ ສມາຄົມ ຫລືກຸ່ມຊົນໃຫ້ຊາບ ບວຊໃຫ້

ສະຕຣີຜູ້ເປັນໂຈຣຊຶ່ງເປັນທີ່ຮູ້ກັນວ່າຕ້ອງໂທສປະຫາຣ ເວັ້ນໄວ້ແຕ່ສະຕຣີທີ່ສົມຄວຣ ແມ່ນພິກສຸນີ ນີ້ກໍຕ້ອງຫຼັມຄືສັງຂາທິເສສທີ່ຊື່ວ່າປຖມາປັຕຕິກະນິສສາຣນີຍະ

ເຣື່ອງຊາຍາເຈົ້າລິຈສວີກັບພິກສຸນີຖຸລລະນັນທາ. ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ໔ ສິກຂາບົທວິພັງຄ໌

### ສິກຂາບົທວິພັງຄ໌

[ຝົ໗໔] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ຮູ້ຢູ່ ຄື ພິກສຸນີນັ້ນຮູ້ເອງ ຄົນອື່ນບອກໃຫ້ທ່ານຮູ້ ຫລືສະຕຣີຜູ້ເປັນໂຈຣນັ້ນບອກ
ທີ່ຊື່ວ່າ ສະຕຣີຜູ້ເປັນໂຈຣ ຄື ສະຕຣີຜູ້ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ມີຣາຄາ ៥ ມາສົກຫລື ຫລາຍກວ່າ ៥ ມາສົກ ໂດຍສ່ວນແຫ່ງຈິຕຄິດຈະລັກ ນີ້ຊື່ວ່າສະຕຣີຜູ້ເປັນໂຈຣ
ທີ່ຊື່ວ່າ ຕ້ອງໂທສປະຫາຣ ຫມາຍເຖິງ ຜູ້ທໍາຄວາມຜິດໂທສເຖິງປະຫາຣຊີວິຕ
ທີ່ຊື່ວ່າ ເປັນທີ່ຮູ້ກັນ ຫມາຍເຖິງ ຜູ້ຄົນເຫລົ່າອື່ນກໍຮູ້ວ່າຜູ້ນີ້ຕ້ອງໂທສປະຫາຣຊີວິຕ
ຄໍາວ່າ ບໍ່ບອກ. . . ໃຫ້ຊາບ ຄື ບໍ່ບອກ
ທີ່ຊື່ວ່າ ພຣະຣາຊາ ຄວາມວ່າ ພຣະຣາຊາຊົງປົກຄອງໃນທີ່ໃດ ຕ້ອງຂໍພຣະບໍຣົມຣາຊານຸຍາຕໃນຖິ່ນນັ້ນ
ທີ່ຊື່ວ່າ ສົງຂ໌ ພຣະຜູ້ມີພຣະພາກຕຣັສເຖິງພິກສຸນີສົງຂ໌ ຕ້ອງຂອນຸຍາຕພິກສຸນີສົງຂ໌
ທີ່ຊື່ວ່າ ຄນະ ຄວາມວ່າ ຄນະປົກຄອງໃນຖິ່ນໃດ ຕ້ອງບອກຄນະໃນຖິ່ນນັ້ນ
ທີ່ຊື່ວ່າ ສມາຄົມ ຄວາມວ່າ ສມາຄົມປົກຄອງໃນຖິ່ນໃດ ຕ້ອງບອກສມາຄົມໃນຖິ່ນນັ້ນ
ທີ່ຊື່ວ່າ ກຸ່ມຊົນ ຄວາມວ່າ ກຸ່ມຊົນປົກຄອງໃນຖິ່ນໃດ ຕ້ອງບອກກຸ່ມຊົນໃນຖິ່ນນັ້ນ
ຄໍາວ່າ ເວັ້ນໄວ້ແຕ່ສະຕຣີທີ່ສົມຄວຣ ອະທິບາຍວ່າ ຍົກເວັ້ນແຕ່ສະຕຣີຜູ້ສົມຄວຣ
ທີ່ຊື່ວ່າ ສະຕຣີທີ່ສົມຄວຣ ມີ ໒ ປະເພດ ຄື (໑) ຜູ້ທີ່ບວຊໃນສໍານັກເດັຽຣະຖີຍ໌
(໒) ຜູ້ທີ່ບວຊໃນສໍານັກພິກສຸນີອື່ນ ພິກສຸນີຄິດວ່າ "ເຮົາຈັກບວຊໃຫ້ເວັ້ນໄວ້ແຕ່ຜູ້ທີ່ຜ່ານກາຣ

ບວຊມາແລ້ວ" ແລ້ວຈຶ່ງແສວງຫາຄນະ ກັມວາຈາຈາຣຍ໌ ບາຕຣຫລືຈີວອນ ຫລືສີມມຸດສີມາ ຕ້ອງອາບັຕິທຸກກະຕະ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ໔ ບິທພາຊນີຍ໌**

ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິຖຸລລັຈຈັຍ
ຈົບກັມວາຈາຄັ້ງສຸດທ້າຍ ອຸປັຊຢາຍ໌ຕ້ອງອາບັຕິສັງຂາທິເສສ ຄນະແລະອາຈາຣຍ໌ຕ້ອງອາບັຕິ ທຸກກະຕະ
ຄຳວ່າ ແມ່ນພິກສຸນີນີ້ ພຣະຜູ້ມີພຣະພາກຕຣັສຫຽບຄຽງພິກສຸນີຮູບກ່ອນ
ຄຳວ່າ ປຖມາປັຕຕິກະ ຄື ຕ້ອງອາບັຕິພ້ອມກັບການລ່ວງລະເມີດວັຕຖຸໂດຍບໍ່ຕ້ອງສວດສມນຸພາສນ໌
ຄຳວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກຫມູ່
ຄຳວ່າ ສັງຂາທິເສສ ຄວາມວ່າ ສຳລັບອາບັຕິນັ້ນ ສົງຂ໌ເທົ່ານັ້ນໃຫ້ມານັດ ຯລຯ
ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ

**ບົທພາຊນີຍ໌**

[໖໗໕] ສະຕຣີຜູ້ເປັນໂຈຣ ພິກສຸນີສຳຄັນວ່າເປັນສະຕຣີຜູ້ເປັນໂຈຣ ບວຊໃຫ້ ຕ້ອງອາບັຕິສັງຂາທິເສສ ເວັ້ນໄວ້ແຕ່ສະຕຣີທີ່ສົມຄວຣ
ສະຕຣີຜູ້ເປັນໂຈຣ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ ເວັ້ນໄວ້ແຕ່ສະຕຣີທີ່ສົມຄວຣ
ສະຕຣີຜູ້ປັນໂຈຣ ພິກສຸນີສຳຄັນວ່າບໍ່ແມ່ນສະຕຣີຜູ້ເປັນໂຈຣ ບວຊໃຫ້ ເວັ້ນໄວ້ແຕ່ສະຕຣີທີ່ ສົມຄວຣ ບໍ່ຕ້ອງອາບັຕິ
ບໍ່ແມ່ນສະຕຣີຜູ້ເປັນໂຈຣ ພິກສຸນີສຳຄັນວ່າເປັນສະຕຣີຜູ້ເປັນໂຈຣ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ບໍ່ແມ່ນສະຕຣີຜູ້ເປັນໂຈຣ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ບໍ່ແມ່ນສະຕຣີຜູ້ເປັນໂຈຣ ພິກສຸນີສຳຄັນວ່າບໍ່ແມ່ນສະຕຣີຜູ້ເປັນໂຈຣ ບວຊໃຫ້ ບໍ່ຕ້ອງອາບັຕິອນາ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບທທີ່ ໔ ອນາປັຕຕິວາຣ**

**ອນາປັຕຕິວາຣ**

**ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື**

[ຝັກ໘ຝ] ໑. ພິກສຸນີບໍ່ຮູ້ວ່າເປັນສະຕຣີຜູ້ເປັນໂຈຣຈຶ່ງບວຊໃຫ້

໒. ພິກສຸນີຂໍອນຸຍາຕແລ້ວບວຊໃຫ້

໓. ພິກສຸນີບວຊໃຫ້ສະຕຣີຜູ້ເປັນໂຈຣຜູ້ສິ້ນຄວຣ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສັງຂາທິເສສສິກຂາບົດທີ ໒ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໓ ນິທານວັຕຖຸ**

**ສັງຂາທິເສສສິກຂາບົດທີ ໓**

ວ່າດ້ວຍການເຂົ້າບໍຣິເວນໝູ່ບ້ານຕາມລຳພັງເປັນຕົ້ນ

**ເຣື້ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ**

[ຝັກ໘໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ອັນເຕວາສີນີຂອງພຣະພັທທກາປິລານີຜິດຖຽງກັບພິກສຸນີທັງຫລາຍ ຈຶ່ງໜີໄປຕະກູນຍາຕໃນໝູ່ບ້ານພຣະພັທທກາປິລານີບໍ່ເຫັນທ່ານຈຶ່ງຖາມພິກສຸນີທັງຫລາຍວ່າ "ພິກສຸນີຊື່ນີ້ຫາຍໄປໃສ" ພິກສຸນີທັງຫລາຍຕອບວ່າ "ແມ່ເຈົ້າ ທ່ານຜິດຖຽງກັບພິກສຸນີທັງຫລາຍແລ້ວຫາຍໄປ" ພຣະພັທທກາປິລານີກ່າວວ່າ "ທີ່ໝູ່ບ້ານພຸ້ນ ມີຕະກູນຍາຕຂອງພິກສຸນີນີ້ຢູ່ທ່ານທັງຫລາຍຈົ່ງໄປສືບຫາດູທີ່ຕະກູນຍາຕນັ້ນ" ພິກສຸນີທັງຫລາຍໄປທີ່ຕາແສງນັ້ນພົບພິກສຸນີນັ້ນແລ້ວໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າເປັນຫຍັງທ່ານມາຄົນດຽວ ບໍ່ຖືກໃຜທຳມິດີມິຮ້າຍແດ່ຫລື" ທ່ານຕອບວ່າ "ແມ່ເຈົ້າທັງຫລາຍ ຂະນ້ອຍບໍ່ຖືກໃຜທຳມິດີມິຮ້າຍເລີຍ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງໄປສູ່ບໍຣິເວນໝູ່ບ້ານຮູບດຽວລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸນີ ທັງຫລາຍວ່າ "ພິກສຸນີທັງຫລາຍ ຊາບວ່າ ພິກສຸນີເຂົ້າບໍຣິເວນຫມູ່ບ້ານຮູບດຽວ ແມ່ນແທ້ບໍ" ພວກພິກສຸນີທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸນີທັງຫລາຍ ຈັ່ງໃດພິກສຸນີຈຶ່ງໄປສູ່ບໍຣິເວນຫມູ່ບ້ານຮູບດຽວລະ ພິກສຸນີທັງຫລາຍ ກາຣ ກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ່ໃຫ້ເຫລື້ອມໃສ່ຫລືເຮັດໃຫ້ຄົນທີ່ເຫລື້ອມໃສ່ຢູ່ ແລ້ວໃຫ້ເຫລື້ອມໃສ່ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ ຂຶ້ນສະແດງດັ່ງນີ້

### ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໓ ພຣະບັນຍັດ

### ພຣະບັນຍັດ

ກໍພິກສຸນີໃດໄປສູ່ບໍຣິເວນຫມູ່ບ້ານຮູບດຽວ ແມ່ນພິກສຸນີນີ້ຕ້ອງທັມຄືສັງຂາທິເສສທີ່ຊື່ວ່າປຖມາ ປັຕຕິກະ ນິສສາຣນີຍະ ສິກຂາບົທນີ້ພຣະຜູ້ມີພຣະພາກຊົງບັນຍັດໄວ້ແກ່ພິກສຸນີທັງຫລາຍຢ່າງນີ້ ເຣື່ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ. ຈົບ

### ເຣື່ອງພິກສຸນີ ໔ ຮູບ

[ຝັງກູ] ສມັຍນັ້ນ ພິກສຸນີ ໔ ຮູບຍ່າງທາງໄກຈາກເມືອງສາເກຕໄປກຸງສາວັຕຖີຣະຫວ່າງທາງຕ້ອງ ຂ້າມແມ່ນ້ຳ ລຳດັບນັ້ນ ພິກສຸນີເຫລົ່ານັ້ນໄດ້ເຂົ້າໄປຫາພວກເຮືອຈ້າງແລ້ວໄດ້ກ່າວດັ່ງນີ້ວ່າ "ທ່ານ ທັງຫລາຍໂປຣດສົງເຄາະພວກຂະນ້ອຍໃຫ້ຂ້າມຟາກດ້ອຍເຖີດ" ພວກເຮືອຈ້າງຕອບວ່າ "ແມ່ເຈົ້າ ພວກເຮົາບໍ່ສາມາດພາຂ້າມໄປຄາວລະ ໔ ຮູບໄດ້ນາຍເຮືອຈ້າງຄົນນຶ່ງຈຶ່ງພາພິກສຸນີຮູບນຶ່ງຂ້າມຟາກ ນາຍເຮືອຈ້າງຄົນທີ່ຂ້າມຟາກແລ້ວຂົ່ມຂືນພິກສຸນີຮູບທີ່ຂ້າມຟາກແລ້ວ ນາຍເຮືອຈ້າງຄົນທີ່ຍັງບໍ່ຂ້າມ ຟາກກໍຂົ່ມຂືນອີກຮູບນຶ່ງທີ່ຍັງບໍ່ຂ້າມຟາກ ພາຍຫລັງ ພິກສຸນີທັງສອງນັ້ນພບກັນແລ້ວຖາມກັນວ່າ "ທ່ານບໍ່ຖືກທຳມິດີມິຮ້າຍແດ່ຫລື" ຮູບທີ່ຖືກຖາມຕອບວ່າ "ແມ່ເຈົ້າ ຂ້ອຍຖືກທຳມິດີມິຮ້າຍ ກໍທ່ານ ບໍ່ຖືກທຳມິດີມິຮ້າຍແດ່ຫລື" ອີກຮູບນຶ່ງຕອບວ່າ "ແມ່ເຈົ້າ ຂ້ອຍກໍຖືກທຳມິດີມິຮ້າຍ" ຄັນທ່ານທັງ ສອງເຖິງກຸງສາວັຕຖີ ບອກເຣື່ອງນີ້ໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາ

ກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງຂ້າມຝັ່ງແມ່ນໍ້າຮູບດຽວລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນໍາເອື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເອື້ອງໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ລ ພຣະອນຸບັນຍັດ໑**

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຂ້າມຝັ່ງແມ່ນໍ້າຮູບດຽວແມ່ນແທ້ບໍ່" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາຫນິວ່າ "ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງຂ້າມຝັ່ງແມ່ນໍ້າຮູບດຽວລະ ພິກສຸທັງຫລາຍກາຣກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະອນຸບັນຍັດ**

ອີກຢ່າງນຶ່ງ ພິກສຸນີໃດໄປສູ່ບໍຣິເວນຫມູ່ບ້ານຮູບດຽວ ຫລືຂ້າມຝັ່ງແມ່ນໍ້າຮູບດຽວ ແມ່ນພິກສຸນີນີ້ກໍຕ້ອງທັມຄືສັງຂາທິເສສທີ່ຊື່ວ່າປຖມາປັຕຕິກະ ນິສສາຣນີຍະ

ສິກຂາບົທນີ້ພຣະຜູ້ມີພຣະພາກຊົງບັນຍັດໄວ້ແກ່ພິກສຸນີທັງຫລາຍຢ່າງນີ້ເອື້ອງພິກສຸນີ ໔ ຮູບ ຈົບ

**ເອື້ອງພິກສຸນີຫລາຍຮູບ**

[ຝົກູລ] ສມັຍນັ້ນ ພິກສຸນີຈໍານວນຫລາຍຮູບຍ່າງທາງໄປກຸງສາວັຕຖີ ໃນແຄວ້ນໂກສົລໄດ້ເຂົ້າໄປສູ່ຫມູ່ບ້ານນຶ່ງໃນຕອນເຢັນ ໃນບັນດາພິກສຸນີເຫລົ່ານັ້ນ ພິກສຸນີຮູບນຶ່ງມີຮູບງາມຫນ້າເບິ່ງຫນ້າຊົມ ຊາຍຄົນນຶ່ງພໍໄດ້ເຫັນກໍມີຈິຕຮັກໃຄ່ພິກສຸນີນັ້ນ ຊາຍຜູ້ນັ້ນເມື່ອຈັດທີ່ນອນຖວາຍພິກສຸນີເຫລົ່ານັ້ນ ໄດ້ຈັດທີ່ນອນໄວ້ເພື່ອພິກສຸນີຮູບງາມນັ້ນ ນະ ສ່ວນຂ້າງນຶ່ງພິກສຸນີນັ້ນຮູ້ທັນວ່າ "ຊາຍຄົນນີ້ຖືກຣາຄະຄອບງໍາ ຖ້າເຂົາມາຫາຕອນກາງຄືນ ເຮົາຕ້ອງເສັຽຫາຍແນ່" ຈຶ່ງໄປນອນທີ່ຕະກູນນຶ່ງໂດຍບໍ່ບອກພິກສຸນີທັງຫລາຍ ຄັ້ງນັ້ນ ຊາຍຜູ້ນັ້ນມາຄົ້ນຫາພິກສຸນີນັ້ນ ພໍດີໄປຖືກຕົວພິກສຸນີທັງຫລາຍ ພວກພິກສຸນີ(ຕື່ນຂຶ້ນມາ)ບໍ່ເຫັນພິກສຸນີນັ້ນຈຶ່ງກ່າວຢ່າງນີ້ວ່າ "ພິກສຸນີນັ້ນອອກໄປກັບ

ຜູ້ຊາຍແລ້ວແນ່ນອນ" ຄັນເມື່ອຜ່ານຣາຕຣີນັ້ນ ພິກສຸນີນັ້ນເຂົ້າໄປຫາພິກສຸນີທັງຫລາຍ ພວກພິກສຸນີໄດ້ກ່າວກັບພິກສຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ທ່ານອອກໄປກັບຜູ້ຊາຍຫລື" ພິກສຸນີນັ້ນກ່າວວ່າ"ແມ່ເຈົ້າ ຂະນ້ອຍບໍ່ໄດ້ອອກໄປກັບຜູ້ຊາຍ" ແລ້ວບອກເຣື່ອງນັ້ນໃຫ້ພິກສຸນີທັງຫລາຍຊາບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບທທີ່ ໓ ພຣະອນຸບັຍຢັຕິ

ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງອອກໄປຢູ່ພັກແຮມໃນຣາຕຣີພຽງຮູບດຽວລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີອອກໄປຢູ່ພັກແຮມໃນຣາຕຣີພຽງຮູບດຽວແມ່ນແທ້ບໍ່" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງອອກໄປຢູ່ພັກແຮມໃນຣາຕຣີພຽງຮູບດຽວລະພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະອນຸບັນຍັດ

ອີກຢ່າງນຶ່ງ ພິກສຸນີໃດໄປສູ່ບໍຣິເວນຫມູ່ບ້ານຮູບດຽວ ຂ້າມຝັ່ງແມ່ນ້ຳຮູບດຽວ ຫລືອອກໄປຢູ່ພັກແຮມໃນຣາຕຣີຮູບດຽວ ແມ່ນພິກສຸນີນີ້ກໍຕ້ອງທັມຄືສັງຂາທິເສສຊື່ ປຖມາປັຕຕິກະ ນິສສາຣນີຍະສິກຂາບົທນີ້ພຣະຜູ້ມີພຣະພາກຊົງບັນຍັດໄວ້ແກ່ພິກສຸນີທັງຫລາຍຢ່າງນີ້

ເຣື່ອງພິກສຸນີຫລາຍຮູບ ຈົບ

### ເຣື້ອງພິກສຸນີຫລາຍຮູບ

[໖໙໐] ສມັຍນັ້ນ ພິກສຸນີຈຳນວນຫລາຍຮູບຍ່າງທາງໄກໄປກຸງສາວັຕຖີ ໃນແຄວ້ນໂກສລພິກສຸນີຮູບນຶ່ງປວດອຸຈຈາຣະ ຈຶ່ງຫລີກຕົວ ຍ່າງຕາມຫລັງໄປຮູບດຽວ ຄົນທັງຫລາຍເຫັນທ່ານ

ຈຶ່ງຂົ່ມຂືນ ລຳດັບນັ້ນ ພິກສຸນີນັ້ນເຂົ້າໄປຫາພິກສຸນີເຫລົ່ານັ້ນ ພວກພິກສຸນີໄດ້ກ່າວກັບພິກສຸນີນັ້ນດັ່ງນີ້ວ່າ "ເປັນຫຍັງທ່ານຈຶ່ງຫລີກຕົວຢູ່ພຽງຮູບດຽວ ບໍ່ຖືກທຳມີດີມີຮ້າຍດອກຫລື" ພິກສຸນີນັ້ນຈຶ່ງຕອບວ່າ "ແມ່ເຈົ້າ ຂະນ້ອຍຖືກທຳມີດີມີຮ້າຍ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງຍ່າງຫລີກຕົວຈາກຄນະຢູ່ພຽງຮູບດຽວລະ" ຯລຯ

## ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຍ່າງຫລີກຕົວຈາກຄນະຢູ່ພຽງຮູບດຽວ ແມ່ນແທ້ບໍ" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງຍ່າງຫລີກຕົວຈາກຄນະຢູ່ພຽງຮູບດຽວລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນອີກໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະອນຸບັນຍັດ

[ຝົລ໑] ອີກຢ່າງນຶ່ງ ພິກສຸນີໃດໄປສູ່ບໍຣິເວນຫມູ່ບ້ານຮູບດຽວ ຂ້າມຝັ່ງແມ່ນ້ຳຮູບດຽວອອກໄປຢູ່ພັກແຮມໃນຣາຕຣີຮູບດຽວ ຫລືຫລີກຕົວຈາກຄນະຢູ່ຮູບດຽວ ແມ່ນພິກສຸນີນີ້ກໍຕ້ອງທັມຄືສັງຂາທິເສສທີ່ຊື່ວ່າປຖມາປັຕຕິກະ ນິສສາຣນີຍະ
ເຣື້ອງພິກສຸນີຫລາຍຮູບ ຈົບ

## ສິກຂາບົທວິພັງຄ໌

[ຝົລ໔] ຄຳວ່າ ອີກຢ່າງນຶ່ງ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ອີກຢ່າງນຶ່ງ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ໄປສູ່ບໍຣິເວນຫມູ່ບ້ານຮູບດຽວ ຄວາມວ່າ ເມື່ອເຫຍຢ່າງຕີນກ້າວທີ ໑ ເຂົ້າສູ່ບໍຣິເວນຮົ້ວຂອງຫມູ່ບ້ານທີ່ມີຮົ້ວລ້ອມ ຕ້ອງອາບັຕິຖຸລລັຈຈັຍ ຍ່າງຕີນກ້າວທີ ໒ ຕ້ອງອາບັຕິສັງຂາທິເສສ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ໓ ອນາປັຕຕິວາຣ

ເມື່ອນາງຍ່າງຕີນກ້າວທີ ໑ ເຂົ້າສູ່ອຸປຈາຣຂອງຫມູ່ບ້ານທີ່ບໍ່ມີຮົ້ວລ້ອມ ຕ້ອງອາບັຕິຖຸລລັຈຈັຍ ຍ່າງຕີນກ້າວທີ ໒ ຕ້ອງອາບັຕິສັງຂາທິເສສ

ຄຳວ່າ ຂ້າມຝັ່ງແມ່ນ້ຳຮູບດຽວ ຄວາມວ່າ ທີ່ຊື່ວ່າແມ່ນ້ຳ ຄືສະຖານທີ່ໃດທີ່ນຸ່ງຊິ່ງເມື່ອພິກສຸນີຄອງຜ້າປົກປິດມົນທົລ ໓ ຍ່າງຂ້າມ ອັນຕຣວາສົກປຽກ ເມື່ອນາງຢ່າງຕີນກ້າວທີ ໑ ຂ້າມໄປຕ້ອງອາບັຕິຖຸລລັຈຈັຍ ຍ່າງຕີນກ້າວທີ ໒ ຂ້າມໄປຕ້ອງອາບັຕິສັງຂາທິເສສ

ຄຳວ່າ ອອກໄປຢູ່ພັກແຮມໃນຣາຕຣີຮູບດຽວ ຄວາມວ່າ ທ່ານລະຫັຕຖບາສ(ຣະຍະຫ່າງສອງສອກເຄິ່ງ)ຈາກພິກສຸນີທີ່ເປັນເພື່ອນໃນຂນະທີ່ອຣຸນຂຶ້ນ ຕ້ອງອາບັຕິຖຸລລັຈຈັຍ ພົ້ນຫັຕຖບາສແລ້ວຕ້ອງອາບັຕິສັງຂາທິເສສ

ຄຳວ່າ ຫລືຫລີກຕົວຈາກຄນະຢູ່ຮູບດຽວ ຄວາມວ່າ ໃນປ່າຊຶ່ງບໍ່ມີຫມູ່ບ້ານຢູ່ ເມື່ອຍ່າງໄປກຳລັງຈະພົ້ນຣະຍະທີ່ຈະເບິ່ງເຫັນໄດ້ຫລືບໍຣິເວນທີ່ເພື່ອນພິກສຸນີຈະໄດ້ຍິນສຽງ ຕ້ອງອາບັຕິຖຸລລັຈຈັຍ ເມື່ອພົ້ນໄປແລ້ວ ຕ້ອງອາບັຕິສັງຂາທິເສສ

ຄຳວ່າ ແມ່ນພິກສຸນີນີ້ ພຣະຜູ້ມີພຣະພາກຕຣັສຫຽບຄຽງພິກສຸນີຮູບກ່ອນໆ

ຄຳວ່າ ປຖມາປັຕຕິກະ ຄື ຕ້ອງອາບັຕິພ້ອມກັບການລ່ວງລະເມີດວັຕຖຸໂດຍບໍ່ຕ້ອງສວດສມນຸພາສນ໌

ຄຳວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກຫມູ່

ຄຳວ່າ ສັງຂາທິເສສ ຄວາມວ່າ ສຳລັບອາບັຕິນັ້ນ ສົງຂ໌ເທົ່ານັ້ນໃຫ້ມານັຕ ຯລຯ

ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໓໒໓] ໑. ພິກສຸນີທີ່ເພື່ອນພິກສຸນີຈາກໄປ ສິກ ມໍຣະນະພາພ ຫລືໄປເຂົ້າຮີດ

໒. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໓. ພິກສຸນີວິກົລຈິຕ

໔. ພິກສຸນີຕົ້ນບັນຍັດ

ສັງຄາທິເສສສິກຂາບົດທີ ໓ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຄາທິເລສກັນຫ໌] ສັງຄາທິເລສສິກຂາບົດທີ ໔ ນິທານວັຕຖຸ

### ສັງຄາທິເສສສິກຂາບົດທີ ໔

ວ່າດ້ວຍການຮຽກພິກສຸນີທີ່ຖືກສົງຄ໌ລົງອຸກເຂປນິຍກັມເຂົ້າຫມູ່

### ເຣື້ອງພິກສຸນີຈັນທກາລີ

[໕໙໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຈັນທກາລີເປັນຜູ້ກໍ່ຄວາມບາດຫມາງ ກໍ່ການຜິດຖຽງ ກໍ່ການວິວາທ ກໍ່ຄວາມອຶກກະທຶກຄຶກຖຽງ ກໍ່ອທິກຣນ໌(ບັນຫາຂອງສົງຄ໌)ໃນສົງຄ໌ ເມື່ອສົງຄ໌ຈະລົງໂທສພິກສຸນີຈັນທກາລີນັ້ນ ພິກສຸນີຖຸລລະນັນທາກໍຄັດຄ້ານ ຕໍ່ມາພິກສຸນີຖຸລລະນັນທາຍ່າງທາງໄປຫມູ່ບ້ານດ້ວຍທຸຣະບາງຢ່າງ ຄັ້ງນັ້ນ ພິກສຸນີສົງຄ໌ຊາບວ່າ "ພິກສຸນີຖຸລລນັນນທາຈາກໄປແລ້ວ" ຈຶ່ງລົງອຸກເຂປນິຍກັມພິກສຸນີຈັນທກາລີເພາະບໍ່ເຫັນອາບັຕິ ຄັນພິກສຸນີຖຸລລະນັນທາທຳທຸຣະໃນຫມູ່ບ້ານເສັດແລ້ວກັບມາຍັງກຸງສາວັຕຖີ ເມື່ອພິກສຸນີຖຸລລະນັນທາກຳລັງມາພິກສຸນີຈັນທກາລີບໍ່ປູອາສນະ ບໍ່ຕັ້ງນ້ຳລ້າງຕີນ ຕັ້ງເກີບ ກະເບື້ອງເຊັດຕີນ ບໍ່ລຸກຮັບບາຕຣແລະຈີວອນ ບໍ່ເອົານ້ຳດື່ມຕ້ອນຮັບ ພິກສຸນີຖຸລລະນັນທາໄດ້ກ່າວກັບພິກສຸນີຈັນທກາລີນັ້ນດັ່ງນີ້ວ່າ "ເມື່ອຂ້ອຍກຳລັງມາ ຈັ່ງໃດທ່ານຈຶ່ງບໍ່ປູອາສນະ ບໍ່ຕັ້ງນ້ຳລ້າງຕີນ ຕັ້ງເກີບ ກະເບື້ອງເຊັດຕີນ ບໍ່ລຸກຮັບບາຕຣແລະຈີວອນ ບໍ່ເອົານ້ຳດື່ມຕ້ອນຮັບລະ" ພິກສຸນີຈັນທກາລີຕອບວ່າ "ແມ່ເຈົ້າ ຄົນບໍ່ມີທີ່ເພິ່ງກໍເຮັດຢ່າງນີ້ແຫລະ" ພິກສຸນີຖຸລລະນັນທາຖາມວ່າ "ເພາະເຫຕຸໃດ ທ່ານຈຶ່ງບໍ່ມີທີ່ເພິ່ງ" ພິກສຸນີຈັນທກາລີຕອບວ່າ "ແມ່ເຈົ້າ ພິກສຸນີເຫລົ່ານີ້ເຂົ້າໃຈວ່າ 'ຂະນ້ອຍເປັນຄົນບໍ່ມີທີ່ເພິ່ງ ບໍ່ມີຊື່ສຽງ ບໍ່ມີໃຜຄອຍກ່າວປົກປ້ອງ' ຈຶ່ງລົງອຸກເຂປນິຍກັມຂະນ້ອຍເພາະບໍ່ເຫັນອາບັຕິ" ພິກສຸນີຖຸລລະນັນທາກ່າວວ່າ "ພິກສຸນີພວກນີ້ໂງ່ງ່າວ ພິກສຸນີພວກນີ້ບໍ່ສລາດພິກສຸນີພວກນີ້ບໍ່ຮູ້ຈັກກັມ ໂທສຂອງກັມ ກັມວິບັຕິ ຫລືກັມສົມບັຕເຮົານີ້ແຫລະຮູ້ຈັກກັມແດ່ ໂທສຂອງກັມແດ່ ກັມວິບັຕິແດ່ ກັມສົມບັຕແດ່ ເຮົານີ້ແຫລະຄວນທຳກັມທີ່ຍັງບໍ່ມີໃຜທຳຫລືຮື້ຟື້ນກັມທີ່ຕັດສິນໄປແລ້ວໄດ້" ຈຶ່ງສັ່ງໃຫ້ປະຊຸມພິກສຸນີສົງຄ໌ທັນທີແລ້ວຮຽກພິກສຸນີຈັນທກາລີກັບເຂົ້າຫມູ່ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງຮຽກພິກສຸນີທີ່ສົງຄ໌ພ້ອມພຽງກັນລົງອຸກເຂປນິຍກັມ

ໂດຍທັມ ໂດຍວິນັຍ ໂດຍສັຕຖຸສາສນ໌ໃຫ້ກັບເຂົ້າຫມູ່ ໂດຍບໍ່ບອກການສົງຊ໌໑ ບໍ່ຮັບຮູ້ສັມທະ ຂອງຄນະລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກ ພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາຮຽກພິກສຸນີທີ່ສົງຊ໌ພ້ອມພຽງກັນລົງອຸກເຂປນີຍກັມໂດຍທັມ ໂດຍວິນັຍ ໂດຍສັຕຖຸສາສນ໌ໃຫ້ກັບເຂົ້າຫມູ່ໂດຍບໍ່ບອກການສົງຊ໌ ບໍ່ຮັບຮູ້ສັມທະຂອງຄນະ ແມ່ນແທ້ບໍ" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງຮຽກພິກສຸນີຜູ້ທີ່ສົງຊ໌ພ້ອມພຽງກັນລົງອຸກເຂປນີຍກັມໂດຍທັມ ໂດຍວິນັຍ ໂດຍສັຕຖຸສາສນ໌ໃຫ້ກັບເຂົ້າຫມູ່ໂດຍບໍ່ບອກການສົງຊ໌ ບໍ່ຮັບຮູ້ສັມທະຂອງຄນະລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໖໙໕] ກໍພິກສຸນີໃດຮຽກພິກສຸນີທີ່ສົງຊ໌ພ້ອມພຽງກັນລົງອຸກເຂປນີຍກັມໂດຍທັມ ໂດຍວິນັຍ ໂດຍສັຕຖຸສາສນ໌ໃຫ້ກັບເຂົ້າຫມູ່ໂດຍບໍ່ບອກການສົງຊ໌ ທັງບໍ່ຮັບຮູ້ສັມທະຂອງຄນະ ແມ່ນພິກສຸນີນີ້ຕ້ອງທັມຄືສັງຂາທິເສສທີ່ຊື່ວ່າປຖມາປັຕຕິກະນິສສາຣນີຍະ

ເຣື້ອງພິກສຸນີຈັນທກາລີ ຈົບ

**ໝາຍເຫດ :**

໑ "ການສົງຊ໌" ຄືສົງຊ໌ຜູ້ດຳເນີນການໃນກິຈສຳຄັນ ເຊັ່ນ ການສັງຄາຍນາຫລືສັງຂກັມຕ່າງໆໃນທີ່ນີ້ຫມາຍເຖິງ ສົງຊ໌ຜູ້ຮ່ວມກັນທຳອຸກເຂປນີຍກັມ

# ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ໔ ສິກຂາບົທວິພັງຄ໌

## ສິກຂາບົທວິພັງຄ໌

[໖໙໖] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ສົງຂ໌ທີ່ຊື່ວ່າ ພ້ອມພຽງກັນ ຄື ມີສັງວາສສເມີກັນ໑ ຢູ່ໃນສມານສັງວາສສີມາ໔
ທີ່ຊື່ວ່າ ທີ່. . . ລົງອຸກເຂປນີຍກັມ ຄື ຖືກສົງຂ໌ລົງໂທສເພາະບໍ່ເຫັນຫລືບໍ່ທໍາຄືນອາບັຕິ ຫລືເພາະບໍ່ຍອມສລະທິດຖິບາປ
ຄໍາວ່າ ໂດຍທັມ ໂດຍວິນັຍ ຄື ໂດຍທັມໃດ ໂດຍວິນັຍໃດ
ຄໍາວ່າ ໂດຍສັຕຖຸສາສນ໌ ຄື ໂດຍຄໍາສັ່ງສອນຂອງພຣະຊິນເຈົ້າ ໂດຍຄໍາສັ່ງສອນຂອງພຣະພຸດທະເຈົ້າ
ຄໍາວ່າ ໂດຍບໍ່ບອກ ຄື ບໍ່ບອກສົງຂ໌ຜູ້ກະທໍາກັມ
ຄໍາວ່າ ບໍ່ຮັບຮູ້ສັນທະຂອງຄນະ ຄື ບໍ່ຮູ້ຄວາມພໍໃຈຂອງຄນະພິກສຸນີຄິດວ່າ “ຈະຮຽກເຂົ້າຫມູ່” ຈຶ່ງແສວງຫາຄນະ ຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິຖຸລລັຈຈັຍ ຈົບກັມວາຈາຄັ້ງສຸດທ້າຍ ຕ້ອງອາບັຕິສັງຂາທິເສສ
ຄໍາວ່າ ແມ່ນພິກສຸນີນີ້ ພຣະຜູ້ມີພຣະພາກຕຣັສຫຽບຄຽງພິກສຸນີຮູບກ່ອນໆ
ຄໍາວ່າ ປຖມາປັຕຕິກະ ຄື ຕ້ອງອາບັຕິພ້ອມກັບການລ່ວງລະເມີດວັຕຖຸໂດຍບໍ່ຕ້ອງສວດສມນຸພາສນ໌
ຄໍາວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກຫມູ່
ຄໍາວ່າ ສັງຂາທິເສສ ຄວາມວ່າ ສໍາລັບອາບັຕິນັ້ນ ສົງຂ໌ເທົ່ານັ້ນໃຫ້ມານັຕ ຯລຯ
ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ

**ໝາຍເຫດ :**

໑ “ມີສັງວາສສເມີກັນ” ຄືມີການທໍາກັມຮ່ວມກັນ ສວດອຸທເທສ(ປາຕິໂມກຂ໌)ຮ່ວມກັນ ມີສິກຂາສເມີກັນ (ດູ ຂໍ້ ໖໕໗ ຫນ້າ ໆ ໃນເຫລັ້ມນີ້)
໔ “ຢູ່ໃນສມານສັງວາສສີມາ” ຢູ່ໃນເຂຕທີ່ກໍາຫນົດໄວ້ເປັນພິເສສສໍາລັບສົງຂ໌ເພື່ອເປັນສະຖານທີ່

ທຳສັງຄກັມຮ່ວມກັນ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຄາທິເລສກັນທ໌] ສັງຄາທິເລສສິກຂາບົທທ ໔ ອນາປັຕຕິວາຣ

**ບົທພາຊນີຍ໌**

**ຕິກສັງຄາທິເສສ**

[ຝົລກ] ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ຮຽກເຂົ້າຫມູ່ ຕ້ອງອາບັຕິສັງຄາທິເສສ
ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ຮຽກເຂົ້າຫມູ່ ຕ້ອງອາບັຕິສັງຄາທິເສສ
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ຮຽກເຂົ້າຫມູ່ ຕ້ອງອາບັຕິສັງຄາທິເສສ

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[ຝົລກ] ໑. ພິກສຸນີບອກສົງຄ໌ຜູ້ທຳກັມແລ້ວຮຽກກັບເຂົ້າຫມູ່
໒. ພິກສຸນີຮຽກກັບເຂົ້າຫມູ່ ເມື່ອຮັບຮູ້ສັນທະຂອງຄນະແລ້ວ
໓. ພິກສຸນີຮຽກພິກສຸນີຜູ້ປະພຶດຂ້ອວັດຮກັບເຂົ້າຫມູ່
໔. ພິກສຸນີຮຽກກັບເຂົ້າຫມູ່ໃນເມື່ອບໍ່ມີກາຣກສົງຄ໌ຜູ້ທຳກັມ
໕. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສັງຆາທິເສສສິກຂາບົດທີ ໔ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົທທ ໕ ພຣະບັນຍັດ

### ສັງຆາທິເສສສິກຂາບົດທີ ໕

ວ່າດ້ວຍການຮັບໂພຊນະຈາກມືຊາຍຜູ້ກຳໜັດ

### ເລື້ອງພິກສຸນີສຸນທຣີນັນທາ

[໖໙໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂດກຸງສາວັດຖີ ສະໄໝນັ້ນ ພິກສຸນີສຸນທຣີນັນທາມີຮູບງາມ ໜ້າເບິ່ງໜ້າຊົມ ຄົນທັງຫລາຍເຫັນທ່ານທີ່ໂຮງສັນ ຕ່າງກໍກຳໜັດ ຈຶ່ງຖວາຍອາຫານທີ່ດີໆແກ່ນາງຜູ້ກຳໜັດ ພິກສຸນີສຸນທຣີນັນທາຈຶ່ງໄດ້ສັນຕາມຄວາມຕ້ອງການ ສ່ວນພິກສຸນີອື່ນໆບໍ່ໄດ້ສັນຕາມທີ່ຄິດໄວ້ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດພິກສຸນີສຸນທຣີນັນທາກຳໜັດຈຶ່ງຮັບຂອງຄ້ຽວຫລືຂອງສັນຈາກມືຊາຍຜູ້ກຳໜັດດ້ວຍມືຂອງຕົນແລ້ວຄ້ຽວສັນລະ” ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພິກສຸນີສຸນທຣີນັນທາກຳໜັດຮັບຂອງຄ້ຽວຫລືຂອງສັນຈາກມືຊາຍຜູ້ກຳໜັດດ້ວຍມືຂອງຕົນແລ້ວຄ້ຽວສັນ ແມ່ນແທ້ບໍ” ພວກພິກສຸທູລຮັບວ່າ “ແມ່ນແທ້ພຣະພຸດທະເຈົ້າຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ“ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີສຸນທຣີນັນທາກຳໜັດຈຶ່ງຮັບຂອງຄ້ຽວຫລືຂອງສັນຈາກມືຊາຍຜູ້ກຳໜັດດ້ວຍມືຂອງຕົນແລ້ວຄ້ຽວສັນລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດ**ໃຫ້ຄົນ**ທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໐໐] ກໍພິກສຸນີໃດກໍາຫນັດ ຮັບຂອງຄ້ຽວຫລືຂອງສັນຈາກມືຊາຍຜູ້ກໍາຫນັດດ້ວຍມືຂອງຕົນ ແລ້ວຄ້ຽວຫລືສັນ ແມ່ນພິກສຸນີນີ້ຕ້ອງຫຼົ້ມຄືສັງຂາທິເສສທີ່ຊື່ ປຖມາປັຕຕິກະ ນິສສາຣນີຍະ

ເຣື້ອງພິກສຸນີສຸນທຣີນັນທາ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໕ ສິກຂາບົທວິພັງຄ໌**

**ສິກຂາບົທວິພັງຄ໌**

[໗໐໑] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ກໍາຫນັດ ໄດ້ແກ່ ພິກສຸນີມີຄວາມຍິນດີ ເພ່ງເລັງ ມີຈິຕຮັກໃຄ່

ທີ່ຊື່ວ່າ ຜູ້ກໍາຫນັດ ໄດ້ແກ່ ຊາຍມີຄວາມຍິນດີ ເພ່ງເລັງ ມີຈິຕຮັກໃຄ່

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນຊາຍທີ່ຮູ້ດຽງສາ ສາມາດທີ່ຈະກໍາຫນັດໄດ້

ທີ່ຊື່ວ່າ ຂອງຄ້ຽວ ຄື ຍົກເວັ້ນໂພຊນະ ໕ ນໍ້າແລະໄມ້ຊໍາຮະແຂ້ວ ນອກນັ້ນຊື່ວ່າຂອງຄ້ຽວ

ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊນະ ໕ ຄື ເຂົ້າສຸກ ຂນົມສົດ ເຂົ້າຕູ ປາ ຊີ້ນ ພິກສຸນີຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະສັນ" ຕ້ອງອາບັຕິຖຸລລັຈຈັຍ ສັນຕ້ອງອາບັຕິສັງຂາທິເສສທຸກໆຄໍາກືນ

ຄໍາວ່າ ແມ່ນພິກສຸນີນີ້ ພຣະຜູ້ມີພຣະພາກຕຣັສຫຽບຄຽງພິກສຸນີຮູບກ່ອນໆ

ຄໍາວ່າ ປຖມາປັຕຕິກະ ຄື ຕ້ອງອາບັຕິພ້ອມກັບການລ່ວງລະເມີດວັຕຖຸໂດຍບໍ່ຕ້ອງສວດສມນຸພາສນ໌

ຄໍາວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກຫມູ່

ຄໍາວ່າ ສັງຂາທິເສສ ຄວາມວ່າ ສໍາລັບອາບັຕິນັ້ນ ສົງຂ໌ເທົ່ານັ້ນໃຫ້ມານັຕ ຯລຯ

ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ ພິກສຸນີຮັບປະເຄນນໍ້າແລະໄມ້ຊໍາຮະແຂ້ວ ຕ້ອງອາບັຕິທຸກກະຕະ ເມື່ອຝ່າຍນຶ່ງກໍາຫນັດ ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະສັນ"

ຕ້ອງອາບັຕິທຸກກະຕະ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ໕ ອນາປັຕຕິວາຣ

**ບົທພາຊນີຍ໌**

[໗໐໔] ສັນ ຕ້ອງອາບັຕິຖຸລລັຈຈັຍ ທຸກໆຄຳກືນ ພິກສຸນີຮັບປະເຄນນ້ຳແລະໄມ້ຊຳຣະແຂ້ວ ຕ້ອງອາບັຕິທຸກກະຕະ

ເມື່ອທັງສອງຝ່າຍຕ່າງກຳຫນັດ ຮັບປະເຄນຈາກມືຍັກສ໌ ເຜດ ກະເທີຍຫລືສັຕວ໌ເດັຽຣະສານນິກາຍເປັນມະນຸສຍ໌ ດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະສັນ" ຕ້ອງອາບັຕິທຸກກະຕະ ສັນຕ້ອງອາບັຕິຖຸລລັຈຈັຍທຸກໆຄຳກືນ ຮັບປະເຄນນ້ຳແລະໄມ້ຊຳຣະແຂ້ວ ຕ້ອງອາບັຕິທຸກກະຕະ

ເມື່ອກຳຫນັດຝ່າຍດຽວ ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະສັນ" ຕ້ອງອາບັຕິທຸກກະຕະ ສັນຕ້ອງອາບັຕິທຸກກະຕະທຸກໆຄຳກືນ ຮັບປະເຄນນ້ຳແລະໄມ້ຊຳຣະແຂ້ວ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**
**ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື**

[໗໐໕] ໑. ພິກສຸນີບໍ່ກຳຫນັດຮັບຂອງຈາກຊາຍຜູ້ບໍ່ກຳຫນັດ
໒. ພິກສຸນີຮູ້ຢູ່ວ່າ "ເຂົາບໍ່ກຳຫນັດ" ຈຶ່ງຮັບປະເຄນ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສັງຂາທິເສສສິກຂາບົດທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ໖ ນິທານວັຕຖຸ

## ສັງຂາທິເສສສິກຂາບົດທີ ໘

ວ່າດ້ວຍການສົ່ງເສີມພິກຂຸນີໃຫ້ຮັບໄທຍະທານຈາກມືຊາຍຜູ້ກຳຫນັດ

## ເລື້ອງພິກຂຸນີສຸນທຣີນັນທາ

[໗໐໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ພິກຂຸນີສຸນທຣີນັນທາມີຮູບງາມ ຫນ້າເບິ່ງຫນ້າຊົມ ຄົນທັງຫລາຍເຫັນພິກຂຸນີສຸນທຣີນັນທານັ້ນທີ່ໂຮງສັນ ຕ່າງກໍກຳຫນັດ ຈຶ່ງຖວາຍອາຫານທີ່ດີໆແກ່ພິກຂຸນີສຸນທຣີນັນທາ ແຕ່ພິກຂຸນີສຸນທຣີນັນທາມີຄວາມຢ້ານເກງ ບໍ່ຍອມຮັບປະເຄນ ພິກຂຸນີຜູ້ນັ່ງຖັດກັນໄດ້ກ່າວກັບພິກຂຸນີສຸນທຣີນັນທານັ້ນດັ່ງນີ້ວ່າ “ແມ່ເຈົ້າເຫດໃດທ່ານຈຶ່ງບໍ່ຮັບປະເຄນ” ນາງຕອບວ່າ “ແມ່ເຈົ້າ ເພາະພວກເຂົາເປັນຜູ້ກຳຫນັດ” ພິກຂຸນີນັ້ນຖາມວ່າ “ກໍທ່ານກຳຫນັດດ້ວຍຫລື” ນາງຕອບວ່າ “ແມ່ເຈົ້າ ຂະນ້ອຍບໍ່ກຳຫນັດ” ພິກຂຸນີນັ້ນເວົ້າວ່າ “ແມ່ເຈົ້າ ຊາຍຜູ້ນີ້ຈະກຳຫນັດຫລືບໍ່ກຳຫນັດກໍເຮັດຫຍັງທ່ານບໍ່ໄດ້ເພາະທ່ານບໍ່ກຳຫນັດ ນິມົນຕ໌ເຖີດ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍຂອງຄ້ຽວຫລືຂອງສັນກໍຕາມທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຄ້ຽວຫລືສັນເຖີດ” ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດ ພິກຂຸນີຈຶ່ງໄດ້ກ່າວຢ່າງນີ້ວ່າ ‘ແມ່ເຈົ້າ ຊາຍຜູ້ນີ້ຈະກຳຫນັດຫລືບໍ່ກຳຫນັດກໍຕາມກໍເຮັດຫຍັງທ່ານບໍ່ໄດ້ ເພາະທ່ານບໍ່ກຳຫນັດນິມົນຕ໌ເຖີດ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດ ຈະເປັນຂອງຄ້ຽວຫລືຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຄ້ຽວສັນເຖີດ” ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຂ໌ບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫລາຍວ່າ “ພິກຂຸທັງຫລາຍ ຊາບວ່າ ພິກຂຸນີກ່າວຢ່າງນີ້ວ່າ ‘ແມ່ເຈົ້າທວິພັງຄ໌ ຊາຍຜູ້ນີ້ຈະກຳຫນັດຫລືບໍ່ກຳຫນັດກໍຕາມກໍເຮັດຫຍັງທ່ານບໍ່ໄດ້ ເພາະທ່ານບໍ່ກຳຫນັດນິມົນຕ໌ເຖີດແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດ ຈະເປັນຂອງຄ້ຽວຫລືຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຄ້ຽວຫລືສັນເຖີດ ດັ່ງນີ້ ແມ່ນແທ້ບໍ” ພວກພິກຂຸທູລຮັບວ່າ “ແມ່ນແທ້ພຣະພຸດທະເຈົ້າຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ “ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີ

ຈຶ່ງໄດ້ກ່າວຢ່າງນີ້ວ່າ 'ແມ່ເຈົ້າ ຊາຍຜູ້ນີ້ຈະກຳຫນັດຫລືບໍ່ກຳຫນັດກໍຕາມ ກໍເຮັດຫຍັງທ່ານບໍ່ໄດ້ ເພາະທ່ານບໍ່ມີຄວາມກຳຫນັດ ນິມົນຕ໌ເຖີດ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດ ຈະເປັນຂອງຄ້ຽວຫລືຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຄ້ຽວຫລືສັນເຖີດ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໐໕] ກໍພິກສຸນີໃດກ່າວຢ່າງນີ້ວ່າ "ຊາຍຜູ້ນັ້ນຈະກຳຫນັດຫລືບໍ່ກຳຫນັດກໍຕາມກໍເຮັດຫຍັງທ່ານບໍ່ໄດ້ ເພາະທ່ານບໍ່ກຳຫນັດ ນິມົນຕ໌ເຖີດ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດຈະເປັນຂອງຄ້ຽວຫລືຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຄ້ຽວຫລືສັນເຖີດ" ດັ່ງນີ້ ແມ່ນພິກສຸນີນີ້ຕ້ອງທັມຄືສັງຄາທິເສສ ທີ່ຊື່ວ່າປຖມາປັຕຕິກະ ນິສສາຣນີຍະ

ເຣື່ອງພິກສຸນີສຸນທຣີນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໐໖] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ກ່າວຢ່າງນີ້ ຄວາມວ່າ ພິກສຸນີສົ່ງເສີມດ້ວຍກ່າວວ່າ "ແມ່ເຈົ້າ ຊາຍຜູ້ນີ້ຈະກຳຫນັດຫລືບໍ່ກຳຫນັດກໍຕາມກໍເຮັດຫຍັງທ່ານບໍ່ໄດ້ ເພາະທ່ານບໍ່ກຳຫນັດ ນິມົນຕ໌ເຖີດ ແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍສິ່ງໃດຈະເປັນຂອງຄ້ຽວຫລືຂອງສັນກໍຕາມ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງແລ້ວຄ້ຽວຫລືສັນເຖີດ" ຕ້ອງອາບັຕິທຸກກະຕະ ພິກສຸນີຮັບປະເຄນຕາມຄຳຂອງພິກສຸນີນັ້ນດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະສັນ" ຕ້ອງອາບັຕິທຸກກະຕະ ສັນ ຕ້ອງອາບັຕິຖຸລລັຈຈັຍທຸກໆຄຳກືນ ສັນເສັດແລ້ວ ຕ້ອງອາບັຕິສັງຄາທິເສສ

ຄຳວ່າ ແມ່ນພິກສຸນີນີ້ ພຣະຜູ້ມີພຣະພາກຕຣັສຫງບຄຽງພິກສຸນີຮູບກ່ອນໆ

ຄຳວ່າ ປຖມາປັຕຕິກະ ຄື ຕ້ອງອາບັຕິພ້ອມກັບກາຣລ່ວງລະເມີດວັຕຖຸໂດຍບໍ່ຕ້ອງສວດສມນຸພາສນ໌

ຄຳວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກຫມູ່

ຄຳວ່າ ສັງຄາທິເສສ ຄວາມວ່າ ສຳລັບອາບັຕິນັ້ນ ສົງຄ໌ເທົ່ານັ້ນໃຫ້ມານັຕ ຯລຯ

ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ
ພິກສຸນີສັ່ງເສີມດ້ວຍກ່າວວ່າ "ຈົ່ງຮັບປະເຄນນ້ຳແລະໄມ້ຊຳຣະແຂ້ວ" ຕ້ອງອາບັຕິທຸກກະຕະ ພິກສຸນີຮັບປະເຄນຕາມຄຳຂອງພິກສຸນີນັ້ນດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະສັນ" ຕ້ອງອາບັຕິທຸກກະຕະ

**ບົທພາຊນີຍ໌**

[໗໐໗] ຝ່າຍນຶ່ງກຳຫນັດ ພິກສຸນີສັ່ງເສີມດ້ວຍກ່າວວ່າ "ຈງຄ້ຽວຂອງຄ້ຽວຫລືຈົ່ງສັນຂອງສັນຈາກມືຂອງຍັກສ໌ ເຜດ ກະເທີຍ ຫລືສັຕວ໌ເດັຽຣະສານທີ່ມີກາຍເປັນມະນຸສຍ໌" ຕ້ອງອາບັຕິທຸກກະຕະ
ພິກສຸນີຮັບປະເຄນຕາມຄຳຂອງພິກສຸນີນັ້ນດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະສັນ" ຕ້ອງອາບັຕິທຸກກະຕະ
ສັນ ຕ້ອງອາບັຕິທຸກກະຕະທຸກໆຄຳກືນ ເມື່ອສັນເສັດ ຕ້ອງອາບັຕິຖຸລລັຈຈັຍ
ພິກສຸນີສັ່ງເສີມດ້ວຍກ່າວວ່າ "ຈົ່ງຮັບປະເຄນນ້ຳແລະໄມ້ສີຟັນ" ຕ້ອງອາບັຕິທຸກກະຕະ
ພິກສຸນີຮັບປະເຄນຕາມຄຳຂອງພິກສຸນີນັ້ນດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະສັນ" ຕ້ອງອາບັຕິທຸກກະຕະ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໖ ອນາປັຕຕິວາຣ**

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໐໘] ໑. ພິກສຸນີຮູ້ຢູ່ວ່າ "ຊາຍບໍ່ກຳຫນັດ" ຈຶ່ງສັ່ງເສີມ
໒. ພິກສຸນີຮູ້ຢູ່ວ່າ "ນາງໂກດ ຈຶ່ງບໍ່ຮັບປະເຄນ" ຈຶ່ງສັ່ງເສີມ
໓. ພິກສຸນີຮູ້ຢູ່ວ່າ "ນາງຈະບໍ່ຮັບປະເຄນເພາະຄວາມເອັນດູຕະກູນ" ຈຶ່ງສັ່ງເສີມ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສັງຂາທິເສສສິກຂາບົດທີ ໖ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໗ ນິທານວັຕຖຸ

### ສັງຂາທິເສສສິກຂາບົດທີ ໗

ວ່າດ້ວຍການບອກຄືນພຣະຣັຕນຕຣັຍ

### ເຣື້ອງພິກສຸນີຈັນທກາລີ

[໗໐໙] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຈັນທກາລີຜິດຖຽງກັບພິກສຸນີທັງຫລາຍ ໂກດ ບໍ່ພໍໃຈ ຈຶ່ງກ່າວຢ່າງນີ້ວ່າ "ເຮົາຂໍບອກລາພຣະພຸທທຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາ ສິກຂາ ສະມະນະຍິງຈະມີແຕ່ສະມະນະສາກຍທິດາເຫລົ່ານີ້ປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນທີ່ ປະພຶດດີມີຄວາມລະອາຍ ມີຄວາມຣະມັດຣະວັງ ໃຝ່ການສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ ໃນສໍານັກສະມະນະຍິງເຫລົ່ານັ້ນ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຈັນທກາລີໂກດ ບໍ່ພໍໃຈ ແລ້ວຈຶ່ງກ່າວຢ່າງນີ້ວ່າ 'ຂະນ້ອຍຂໍບອກລາ ພຣະພຸທທ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະ ສາກຍທິດາເຫລົ່ານີ້ ປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນທີ່ປະພຶດດີ ມີຄວາມລະອາຍ ມີຄວາມ ຣະມັດຣະວັງ ໃຝ່ການສຶກສາກໍມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສໍານັກສະມະນະຍິງເຫລົ່ານັ້ນດັ່ງນີ້ ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລໍາດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຈັນທກາລີໂກດ ບໍ່ພໍໃຈ ແລ້ວກ່າວຢ່າງນີ້ວ່າ 'ຂ້າ ພະເຈົ້າຂໍບອກລາພຣະພຸທທ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາສິກຂາ ສະມະນະຍິງ ຈະມີແຕ່ສະມະນະສາກຍທິດາເຫລົ່ານີ້ປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນທີ່ປະພຶດດີມີຄວາມ ລະອາຍ ມີຄວາມຣະມັດຣະວັງ ໃຝ່ການສຶກສາກໍມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສໍານັກສະມະນະ ຍິງເຫລົ່ານັ້ນ ດັ່ງນີ້ ແມ່ນແທ້ບໍ" ພວກພິກສຸທູລຣັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີ ພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈັນທກາລີໂກດ ບໍ່ພໍໃຈ ຈຶ່ງເວົ້າຢ່າງນີ້ວ່າ 'ຂ້າພະເຈົ້າຂໍບອກລາພຣະພຸທທ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກ

ລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກຍທິດາເຫລົ່ານີ້ປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນທີ່ປະພຶດດີ ມີຄວາມລະອາຍ ມີຄວາມຣະມັດຣະວັງ ໃຝ່ກາຣສຶກສາກໍມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສຳນັກສະມະນະຍິງເຫລົ່ານັ້ນ'ດັ່ງນີ້ລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໑໐] ກໍພິກສຸນີໃດໂກດ ບໍ່ພໍໃຈ ກ່າວຢ່າງນີ້ວ່າ "ຂະນ້ອຍຂໍບອກລາພຣະພຸທທ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກຍທິດາເຫລົ່ານັ້ນປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນຜູ້ມີຄວາມລະອາຍ ມີຄວາມຣະມັດຣະວັງ ໃຝ່ກາຣສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສຳນັກຂອງສະມະນະຍິງເຫລົ່ານັ້ນ" ພິກສຸນີນັ້ນອັນພິກສຸນີທັງຫລາຍ ຄວນວ່າກ່າວຕັກເຕືອນຢ່າງນີ້ວ່າ "ແມ່ເຈົ້າ ທ່ານໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວຢ່າງນີ້ວ່າ 'ຂະນ້ອຍ ຂໍບອກລາພຣະພຸທທ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກຍທິດາປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນຜູ້ມີຄວາມລະອາຍ ມີຄວາມຣະມັດຣະວັງ ໃຝ່ກາຣສຶກສາກໍມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສຳນັກຂອງສະມະນະຍິງເຫລົ່ານັ້ນ' ດັ່ງນີ້ ແມ່ເຈົ້າ ທ່ານຈົ່ງຍິນດີເຖີດ ພຣະທັມອັນພຣະຜູ້ມີພຣະພາກຕຣັສໄວ້ດີແລ້ວ ຈົ່ງປະພຶດພຣົມຈັນຍ໌ເພື່ອທຳທີ່ສຸດທຸກຂ໌ໂດຍຊອບເຖີດ" ພິກສຸນີນັ້ນອັນພິກສຸນີທັງຫລາຍວ່າກ່າວຕັກເຕືອນຢູ່ຢ່າງນີ້ ກໍຍັງຢືນຢັນຢູ່ຢ່າງນັ້ນ ພິກສຸນີນັ້ນອັນພິກສຸນີທັງຫລາຍຄວນສວດສມນຸພາສນ໌ຈົນຄົບ ໓ ຄັ້ງເພື່ອ ໃຫ້ສລະເຣື່ອງນັ້ນ ຖ້າທ່ານກຳລັງຖືກສວດສມນຸພາສນ໌ກວ່າຈະຄົບ ໓ ຄັ້ງ ສລະເຣື່ອງນັ້ນໄດ້ນັ້ນເປັນກາຣດີ ຖ້າບໍ່ສລະ ແມ່ນພິກສຸນີນີ້ຕ້ອງທັມຄືສັງຂາທິເສສ ທີ່ຊື່ວ່າຍາວຕຕິຍກະ ນິສສາຣນີຍະ

ເຣື່ອງພິກສຸນີຈັນທກາລີ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເສສກັນທ໌] ສັງຂາທິເສສສິກຂາບົດທີ ໗ ສິກຂາບົທວິພັງຄ໌**

**ສິກຂາບົທວິພັງຄ໌**

[໗໑໑] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ໂກດບໍ່ພໍໃຈ ຄື ບໍ່ຊອບໃຈ ແຄ້ນໃຈ ເຈັບໃຈ

ຄຳວ່າ ກ່າວຢ່າງນີ້ ຄື ກ່າວວ່າ "ຂະນ້ອຍຂໍບອກລາພຣະພຸທຖ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກຍທິດາເຫລົ່ານີ້ປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນຜູ້ມີຄວາມລະອາຍ ມີຄວາມຣະມັດຣະວັງ ໃຝ່ກາຣສຶກສາກໍມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສຳນັກສະມະນະຍິງເຫລົ່ານັ້ນ"

ຄຳວ່າ ພິກສຸນີນັ້ນ ໄດ້ແກ່ ພິກສຸນີຜູ້ກ່າວຢ່າງນັ້ນ

ຄຳວ່າ ອັນພິກສຸນີທັງຫລາຍ ໄດ້ແກ່ ພິກສຸນີເຫລົ່າອື່ນ

ພິກສຸນີທັງຫລາຍທີ່ໄດ້ເຫັນໄດ້ຍິນຄວນວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວຢ່າງນີ້ວ່າ 'ຂະນ້ອຍຂໍບອກລາພຣະພຸທຖ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກຍທິດາເຫລົ່ານີ້ ປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນຜູ້ມີຄວາມລະອາຍ ມີຄວາມຣະມັດຣະວັງ ໃຝ່ກາຣສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສຳນັກຂອງສະມະນະຍິງເຫລົ່ານັ້ນ' ດັ່ງນີ້ ແມ່ເຈົ້າ ທ່ານຈົ່ງຍິນດີເຖີດ ພຣະທັມອັນພຣະຜູ້ມີພຣະພາກຕຣັສໄວ້ດີແລ້ວ ຈົ່ງປະພຶດພຣົມຈັນຍ໌ເພື່ອທຳທີ່ສຸດທຸກຂ໌ ໂດຍຊອບເຖີດ"

ຄວນວ່າກ່າວຕັກເຕືອນທ່ານ ແມ່ນຄັ້ງທີ ໔ ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສລະໄດ້ ນັ້ນເປັນກາຣດີ ຖ້າບໍ່ສລະ ຕ້ອງອາບັຕິທຸກກະຕະ ພິກສຸນີທັງຫລາຍໄດ້ຍິນແລ້ວບໍ່ວ່າກ່າວ ຕ້ອງອາບັຕິທຸກກະຕະ ພິກສຸນີນັ້ນອັນພິກສຸນີທັງຫລາຍຄວນນຳມາທ່າມກາງສົງຂ໌ວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວຢ່າງນີ້ວ່າ 'ຂະນ້ອຍຂໍບອກລາພຣະພຸທຖ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກຍທິດາເຫລົ່ານີ້ ປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນຜູ້ມີຄວາມລະອາຍ ມີຄວາມຣະມັດຣະວັງ ໃຝ່ກາຣສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສຳນັກຂອງສະມະນະຍິງເຫລົ່ານັ້ນ' ດັ່ງນີ້ ແມ່ເຈົ້າ ທ່ານຈົ່ງຍິນດີເຖີດ ພຣະທັມອັນພຣະຜູ້ມີພຣະພາກຕຣັສໄວ້ດີແລ້ວ ຈົ່ງປະພຶດພຣົມຈັນຍ໌ເພື່ອທຳທີ່ສຸດທຸກຂ໌ ໂດຍຊອບເຖີດ" ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໔

ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສລະໄດ້ ນັ້ນເປັນກາຣດີ ຖ້າບໍ່ສລະ ຕ້ອງອາບັຕິທຸກກະຕະ ພິກສຸນີນັ້ນອັນສົງຂ໌ຄວນສວດສມນຸພາສນ໌

**ວິທີສູດສູມນຸພາສນ໌ແລະກັມວາຈາສູດສູມນຸພາສນ໌**

ພິກສຸທັງຫລາຍ ກໍສົງຂ໌ຄວນສູດສູມນຸພາສນ໌ພິກສຸນີນັ້ນຢ່າງນີ້ ຄື ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຂ໌ຊາບດ້ວຍຍັຕຕິຈຕຸຕຖກັມວາຈາວ່າ

[ກ໑໔] "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີຊື່ນີ້ໂກດ ບໍ່ພໍໃຈ ກ່າວຢ່າງນີ້ວ່າ 'ຂະນ້ອຍ ຂໍບອກລາພຣະພຸທຫູ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາສິກຂາ ສະມະນະຍິງຈະມີແຕ່ສະມະນະສາກຍທິດາເຫລົ່ານີ້ປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນຜູ້ມີຄວາມລະອາຍ ມີຄວາມຣະມັດ ຣະວັງ ໃຝ່ກາຣສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສຳນັກຂອງສະມະນະຍິງເຫລົ່ານັ້ນ' ທ່ານບໍ່ຍອມສລະເຣື້ອງນັ້ນ ຖ້າສົງຂ໌ພ້ອມກັນແລ້ວຄວນສູດສູມນຸພາສນ໌ພິກສຸນີຊື່ນີ້ເພື່ອໃຫ້ສລະເຣື້ອງນັ້ນ ນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີຊື່ນີ້ໂກດ ບໍ່ພໍໃຈກ່າວຢ່າງນີ້ວ່າ 'ຂະນ້ອຍ ຂໍບອກລາພຣະພຸທຫູ ຂໍບອກລາພຣະທັມ ຂໍບອກລາພຣະສົງຂ໌ ຂໍບອກລາສິກຂາສະມະນະຍິງຈະມີແຕ່ສະມະນະສາກຍທິດາເຫລົ່ານີ້ປານນັ້ນຫລື ແມ່ນສະມະນະຍິງເຫລົ່າອື່ນຜູ້ມີຄວາມລະອາຍ ມີຄວາມຣະມັດຣະວັງ ໃຝ່ກາຣສຶກສາກໍຍັງມີຢູ່ ເຮົາຈະໄປປະພຶດພຣົມຈັນຍ໌ໃນສຳນັກຂອງສະມະນະຍິງເຫລົ່ານັ້ນ' ທ່ານບໍ່ສລະເຣື້ອງນັ້ນ ສົງຂ໌ສູດສູມນຸພາສນ໌ພິກສຸນີ ຊື່ນີ້ເພື່ອໃຫ້ສລະເຣື້ອງນັ້ນ ແມ່ເຈົ້າຮູບໃດເຫັນດ້ວຍກັບກາຣສູດສູມນຸພາສນ໌ພິກສຸນີຊື່ນີ້ເພື່ອໃຫ້ສລະເຣື້ອງນັ້ນ ແມ່ເຈົ້າຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງຂ້າພະເຈົ້າກ່າວຄວາມນີ້ເປັນຄັ້ງທີ ໒ ຯລຯ ຂ້າພະເຈົ້າກ່າວຄວາມນີ້ເປັນຄັ້ງທີ ໓ ຯລຯ
ພິກສຸນີນີ້ສົງຂ໌ສູດສູມນຸພາສນ໌ເພື່ອໃຫ້ສລະເຣື້ອງນັ້ນແລ້ວ ສົງຂ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໗ ບົທພາຊນີຍ໌**

ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິຖຸລລັຈຈັຍ
ຈົບກັມວາຈາຄັ້ງສຸດທ້າຍ ຕ້ອງອາບັຕິສັງຂາທິເສສ ເມື່ອທ່ານຕ້ອງອາບັຕິສັງຂາທິເສສ
ອາບັຕິທຸກກະຕະ(ທີ່ຕ້ອງ)ເພາະຍັຕຕິ ຖຸລລັຈຈັຍ(ທີ່ຕ້ອງ)ເພາະກັມວາຈາ ໔ ຄັ້ງ ຍ່ອມຣະງັບໄປ
ຄຳວ່າ ແມ່ນພິກສຸນີນີ້ ພຣະຜູ້ມີພຣະພາກຕຣັສທຽບຖຽງພິກສຸນີຮູບກ່ອນໆ
ຄຳວ່າ ຍາວຕຕິຍກະ ຄື ຕ້ອງອາບັຕິເພາະສູດສູມນຸພາສນ໌ຈົບ ໓ ຄັ້ງ ບໍ່ແມ່ນຕ້ອງອາບັຕິພ້ອມກັບ

ກາຣລ່ວງລະເມີດວັຕຖຸ
ຄຳວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກຫມູ່
ຄຳວ່າ ສັງຂາທິເສສ ຄວາມວ່າ ສຳລັບອາບັຕິນັ້ນ ສົງຂ໌ເທົ່ານັ້ນໃຫ້ມານັຕ ຯລຯ
ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ

**ບິທພາຊນີຍ໌**

**ຕິກສັງຂາທິເສສ**

[໗໑໖] ກັມ໑ທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບໍ່ສລະ໔ ຕ້ອງອາບັຕິສັງຂາທິເສສ໖
ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບໍ່ສລະ ຕ້ອງອາບັຕິສັງຂາທິເສສ
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບໍ່ສລະ ຕ້ອງອາບັຕິສັງຂາທິເສສ

**ໝາຍເຫດ :**

໑ "ກັມ" ຫມາຍເຖິງຍັຕຕິຈຕຸຕຖກັມອາຈາສຳລັບສວດສມນຸພາສນ໌
໔ "ບໍ່ສລະ" ຄືບໍ່ສລະເຣື້ອງທີ່ກ່າວດ້ວຍອຳນາຈຄວາມໂກດວ່າ "ຂໍບອກລາພຣະພຸທຫຼ" ເປັນຕົ້ນນັ້ນ
໖ ຕ້ອງອາບັຕິສັງຂາທິເສສຫລັງຈາກທີ່ສົງຂ໌ສວດສມນຸພາສນ໌ຄົບ ໖ ຄັ້ງ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ໗ ອນາປັຕຕິວາຣ**

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໑໔] ໑. ພິກສຸນີຍັງບໍ່ຖືກສູອດສູມນຸພາສນ໌

໔. ພິກສຸນີຍອມສູລະ

໓. ພິກສຸນີວິກົລຈິຕ

໔. ພິກສຸນີຕົ້ນບັນຍັດ

ສັງຂາທິເສສສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ໗ ນິທານວັຕຖຸ**

**ສັງຂາທິເສສສິກຂາບົດທີ ໗**

ວ່າດ້ວຍພິກສຸນີໂກດເພາະຖືກຕັດສີນໃຫ້ເສັຽຄດີໃນອທິກຣນ໌(ບັນຫາຂອງສົງຂ໌)

**ເຣື້ອງພິກສຸນີຈັນທກາລີ**

[໗໑໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຈັນທກາລີຖືກຕັດສີນໃຫ້ເສັຽຄດີໃນອທິກຣນ໌(ບັນຫາຂອງສົງຂ໌)ນຶ່ງ໑ ໂກດ ບໍ່ພໍໃຈ ກ່າວຢ່າງນີ້ວ່າ “ພວກພິກສຸນີລຳອຽງ ເພາະຊອບພວກພິກສຸນີລຳອຽງເພາະຊັງ ພວກພິກສຸນີລຳອຽງເພາະຫລົງ ແລະພວກພິກສຸນີລຳອຽງເພາະຢ້ານ” ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດແມ່ເຈົ້າຈັນທກາລີ ເມື່ອຖືກຕັດ ສີນໃຫ້ເສັຽຄດີໃນອທິກຣນ໌(ບັນຫາຂອງສົງຂ໌)ນຶ່ງແລ້ວໂກດ ບໍ່ພໍໃຈ ກ່າວຢ່າງນີ້ວ່າ ‘ພວກພິກສຸນີລຳອຽງເພາະຊອບ ພວກພິກສຸນີລຳອຽງເພາະຊັງ ພວກພິກສຸນີລຳອຽງເພາະຫລົງແລະພວກພິກສຸນີ ລຳອຽງເພາະຢ້ານລະ” ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ

ທັງຫລາຍວ່າ "ພິກສຸທັງຫລາຍ ຂາບວ່າ ພິກສຸນີຈັນທກາລີຖືກຕັດສິນໃຫ້ເສັຽຄດີໃນອທິກຣນ໌(ບັນຫາຂອງສົງຄ໌)ນຶ່ງໂກດ ບໍ່ພໍໃຈ ກ່າວຢ່າງນີ້ວ່າ 'ພວກພິກສຸນີລຳອຽງເພາະຊອບພວກພິກສຸນີລຳອຽງເພາະຊັງ ພວກພິກສຸນີລຳອຽງເພາະຫລົງ ແລະພວກພິກສຸນີລຳອຽງເພາະຢ້ານ' ດັ່ງນີ້ ແມ່ນແທ້ບໍ່" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຜູ້ຈັນທກາລີເມື່ອຖືກຕັດສິນໃຫ້ເສັຽຄດີໃນອທິກຣນ໌(ບັນຫາຂອງສົງຄ໌)ນຶ່ງໂກດ ບໍ່ພໍໃຈ ກ່າວຢ່າງນີ້ວ່າ 'ພວກພິກສຸນີ

**ໝາຍເຫດ :**

໑ "ອທິກຣນ໌(ບັນຫາຂອງສົງຄ໌)ນຶ່ງ" ໝາຍເຖິງອທິກຣນ໌(ບັນຫາຂອງສົງຄ໌)ຢ່າງໃດຢ່າງນຶ່ງໃນອທິກຣນ໌(ບັນຫາຂອງສົງຄ໌) ໔ (ວິ. ອ. ໒/໗໑໕/໔໘໐, ດູ ອທິກຣນ໌(ບັນຫາຂອງສົງຄ໌) ໔ ໃນສິກຂາບົທວິພັງຄ໌ແຫ່ງສິກຂາບົທນີ້ ແລະໃນ ວິ. ປ. ໘/໓໔໘/໓໒໓-໓໒໕)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໘ ສິກຂາບົທວິພັງຄ໌

ລຳອຽງເພາະຊອບ ພວກພິກສຸນີລຳອຽງເພາະຊັງ ພວກພິກສຸນີລຳອຽງເພາະຫລົງແລະພວກພິກສຸນີລຳອຽງເພາະຢ້ານລະ' ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໑໙] ກໍພິກສຸນີໃດຖືກຕັດສິນໃຫ້ເສັຽຄດີໃນອທິກຣນ໌(ບັນຫາຂອງສົງຄ໌)ນຶ່ງ ໂກດ ບໍ່ພໍໃຈ ຈຶ່ງກ່າວຢ່າງນີ້ວ່າ "ພວກພິກສຸນີລຳອຽງເພາະຊອບ ພວກພິກສຸນີລຳອຽງເພາະຊັງພວກພິກສຸນີລຳອຽງເພາະຫລົງ ແລະພວກພິກສຸນີລຳອຽງເພາະຢ້ານ" ພິກສຸນີນັ້ນອັນພິກສຸນີທັງຫລາຍຄວນວ່າກ່າວຕັກເຕືອນຢ່າງນີ້ວ່າ "ແມ່ເຈົ້າ ທ່ານເມື່ອຖືກຕັດສິນໃຫ້ເສັຽຄດີໃນອທິກຣນ໌(ບັນຫາຂອງສົງຄ໌)ນຶ່ງໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວຢ່າງນີ້ວ່າ 'ພວກພິກສຸນີລຳອຽງເພາະຊອບ ພວກພິກສຸນີລຳອຽງເພາະຊັງ ພວກພິກສຸນີລຳອຽງເພາະຫລົງ ແລະພວກພິກສຸນີລຳອຽງເພາະຢ້ານ' ແມ່ເຈົ້າເອງກໍຍັງລຳອຽງເພາະຊອບແດ່ລຳອຽງເພາະຊັງແດ່ ລຳອຽງເພາະຫລົງແດ່ ລຳອຽງເພາະຢ້ານແດ່" ພິກສຸນີນັ້ນ ອັນ

ພິກສຸນີທັງຫລາຍວ່າກ່າວຕັກເຕືອນຢູ່ຢ່າງນີ້ກໍຍັງຢືນຢັນຢູ່ຢ່າງນັ້ນ ພິກສຸນີນັ້ນ ອັນພິກສຸນີທັງຫລາຍຄວນສູດສມນຸພາສນ໌ຈົນຄົບ ໓ ຄັ້ງເພື່ອໃຫ້ສລະເຣື່ອງນັ້ນ ຖ້າທ່ານກໍາລັງຖືກສູດສມນຸພາສນ໌ກວ່າຈະຄົບ ໓ ຄັ້ງສລະເຣື່ອງນັ້ນໄດ້ ນັ້ນເປັນການດີ ຖ້າບໍ່ສລະ ແມ່ນພິກສຸນີນີ້ກໍຕ້ອງຫັມຄືສັງຂາທິເສສທີ່ຊື່ວ່າຍາວຕຕິຍກະ ນິສສາຣນີຍະ

ເຣື່ອງພິກສຸນີຈັນທກາລີ ຈົບ

**ສິກຂາບົທວິພັງຄ໌**

[໗໑໗] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີ
ພຣະພາຄຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໗ ສິກຂາບົທວິພັງຄ໌**

ຄໍາວ່າ ໃນອທິກຣນ໌(ບັນຫາຂອງສົງຂ໌)ນີ້ງ ຄື ທີ່ຊື່ວ່າ ອທິກຣນ໌(ບັນຫາຂອງສົງຂ໌) ໄດ້ແກ່
ອທິກຣນ໌ (ບັນຫາຂອງສົງຂ໌) ໔ ຢ່າງ໑ ຄື
(໑) ວິວາທາທິກຣນ໌ (໒) ອນຸວາທາທິກຣນ໌ (໓) ອາປັຕຕາທິກຣນ໌ (໔)ກິຈຈາທິກຣນ໌
ທີ່ຊື່ວ່າ ຖືກຕັດສິນໃຫ້ເສັງຄດີ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຜູ້ເສັງຄດີ
ຄໍາວ່າ ໂກດບໍ່ພໍໃຈ ຄື ບໍ່ຊອບໃຈ ແຄ້ນໃຈ ເຈັບໃຈ
ຄໍາວ່າ ກ່າວຢ່າງນີ້ ຄື ກ່າວວ່າ ພວກພິກສຸນີລໍາອຽງເພາະຊອບ ຯລຯ ແລະພວກພິກສຸນີລໍາອຽງເພາະຢ້ານ
ຄໍາວ່າ ພິກສຸນີນັ້ນ ຄື ພິກສຸນີຜູ້ກ່າວຢ່າງນັ້ນ
ຄໍາວ່າ ອັນພິກສຸນີທັງຫລາຍ ຄື ອັນພິກສຸນີເຫລົ່າອື່ນ
ພິກສຸນີທັງຫລາຍທີ່ໄດ້ເຫັນໄດ້ຍິນຄວນວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານຖືກຕັດສິນໃຫ້ເສັງຄດີໃນອທິກຣນ໌(ບັນຫາຂອງສົງຂ໌)ນີ້ງແລ້ວ ໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວຢ່າງນີ້ວ່າ 'ພວກພິກສຸນີ ລໍາອຽງເພາະຊອບ ຯລຯ ແລະພວກພິກສຸລໍາອຽງເພາະຢ້ານ ແມ່ເຈົ້າເອງກໍຍັງລໍາອຽງເພາະຊອບແດ່ ຯລຯ ລໍາອຽງເພາະຢ້ານແດ່" ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໑

ຄວນວ່າກ່າວຕັກເຕືອນທ່ານ ແມ່ນຄັ້ງທີ ๓ ຖ້າທ່ານສລະໄດ້ ນັ້ນເປັນກາຣດີ ຖ້າບໍ່ສລະ ຕ້ອງອາບັຕິທຸກກະຕະ ພິກສຸນີທັງຫລາຍໄດ້ຍິນແລ້ວບໍ່ຕັກເຕືອນ ຕ້ອງອາບັຕິທຸກກະຕະ ພິກສຸນີນັ້ນ ອັນພິກສຸນີທັງຫລາຍຄວນພາມາທ່າມກາງສົງຂ໌ແລ້ວວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານເມື່ອຖືກຕັດສິນໃຫ້ເສັຽຄດີໃນອທິກຣນ໌(ບັນຫາຂອງສົງຂ໌)ນຶ່ງແລ້ວ ໂກດ ບໍ່ພໍໃຈ ກໍຢ່າໄດ້ກ່າວຢ່າງນີ້ວ່າ'ພວກພິກສຸນີລຳອຽງເພາະຊອບ ฯລฯ ແລະພວກພິກສຸນີລຳອຽງເພາະຢ້ານ' ດັ່ງນີ້ ແມ່ເຈົ້າເອງກໍຍັງລຳອຽງເພາະຊອບແດ່ ฯລฯ ລຳອຽງເພາະຢ້ານແດ່" ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໒
ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ๓ ຖ້າທ່ານສລະໄດ້ ນັ້ນເປັນກາຣດີ ຖ້າບໍ່ສລະ ຕ້ອງອາບັຕິທຸກກະຕະ ພິກສຸນີນັ້ນອັນສົງຂ໌ຄວນສວດສມນຸພາສນ໌

**ໝາຍເຫດ :**

໑ ອທິກຣນ໌(ບັນຫາຂອງສົງຂ໌) ໔ ຢ່າງ ຄື

໑. ວິວາທາທິກຣນ໌ ໄດ້ແກ່ ກາຣຖຽງກັນວ່າ ນີ້ເປັນທັມວິນັຍ ນີ້ບໍ່ແມ່ນທັມວິນັຍເປັນຕົ້ນ

໒. ອນຸວາທາທິກຣນ໌ ໄດ້ແກ່ ກາຣໂຈທກັນດ້ວຍສີລວິບັຕິ ອາຈາຣວິບັຕິ ທິຕຖິວິບັຕິ ຫລືອາຊີວວິບັຕິ

๓. ອາປັຕຕາທິກຣນ໌ ໄດ້ແກ່ ກາຣຕ້ອງອາບັຕິ ກາຣປັບອາບັຕິແລະແກ້ຕ່າງໆໃຫ້ພົ້ນອາບັຕິ

໔. ກິຈຈາທິກຣນ໌ ໄດ້ແກ່ ກິຈທູຣະຂອງສົງຂ໌ ເຊັ່ນ ອປໂລກນກັມ ຍັຕຕິກັມ ຍັຕຕິທຸຕິຍກັມ ຍັຕຕິຈຕຸຕຖກັມ ມີກາຣສວດປາຕິໂມກຂ໌ເປັນຕົ້ນ (ດູ ວິ. ປ. ๘/๓໔๘/໒໒໒-໒໒໕)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ๘ ສິກຂາບົທວິພັງຄ໌**

**ວິທີສວດສມນຸພາສນ໌ແລະກັມວາຈາສວດສມນຸພາສນ໌**

ພິກສຸທັງຫລາຍ ກໍສົງຂ໌ຄວນສວດສມນຸພາສນ໌ພິກສຸນີນັ້ນຢ່າງນີ້ ຄື ພິກສຸນີຜູ້ສລາດ ສາມາດຄວນປະກາດໃຫ້ສົງຂ໌ຊາບດ້ວຍຍັຕຕິຈຕຸຕຖກັມວາຈາວ່າ

[໗໑๘] "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີຊື່ນີ້ຖືກຕັດສິນໃຫ້ເສັຽຄດີໃນ ອທິກຣນ໌(ບັນຫາຂອງສົງຂ໌)ນຶ່ງ ໂກດ ບໍ່ພໍໃຈ ຈຶ່ງກ່າວຢ່າງນີ້ວ່າ 'ພວກພິກສຸນີລຳອຽງເພາະຊອບ ฯລฯ ແລະພວກ

ພິກສຸນີລຳອຽງເພາະຢ້ານ" ທ່ານບໍ່ສລະເຣື້ອງນັ້ນ ຖ້າສົງຊ໌ພ້ອມກັນແລ້ວຄວນສວດສມນຸພາສນ໌ ພິກສຸນີຊື່ນີ້ເພື່ອໃຫ້ສລະເຣື້ອງນັ້ນ ນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຊ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີຊື່ນີ້ຖືກຕັດສິນໃຫ້ເສັຽຄດີໃນອທິກຣນ໌(ບັນຫາຂອງສົງຊ໌)ເຣື່ອງນຶ່ງ ໂກດ ບໍ່ພໍໃຈ ຈຶ່ງກ່າວຢ່າງນີ້ວ່າ 'ພວກພິກສຸນີລຳອຽງເພາະຊອບ ฯລฯ ແລະພວກພິກສຸນີລຳອຽງເພາະຢ້ານ' ທ່ານບໍ່ສລະເຣື້ອງນັ້ນ ສົງຊ໌ສວດສມນຸພາສນ໌ພິກສຸນີຊື່ນີ້ເພື່ອໃຫ້ສລະເຣື່ອງນັ້ນ ແມ່ເຈົ້າຮູບໃດເຫັນດ້ວຍກັບການສວດສມນຸພາສນ໌ພິກສຸນີຊື່ນີ້ເພື່ອໃຫ້ສລະເຣື່ອງນັ້ນ ແມ່ເຈົ້າຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງຂະນ້ອຍກ່າວຄວາມນີ້ແມ່ນຄັ້ງທີ ໔ ฯລฯ ຂະນ້ອຍກ່າວຄວາມນີ້ແມ່ນຄັ້ງທີ ໓ ฯລฯພິກສຸນີຊື່ນີ້ສົງຊ໌ສວດສມນຸພາສນ໌ແລ້ວເພື່ອໃຫ້ສລະເຣື້ອງນັ້ນ ສົງຊ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິຖຸລລັຈຈັຍ

ຈົບກັມວາຈາຄັ້ງສຸດທ້າຍ ຕ້ອງອາບັຕິສັງຊາທິເສສ ເມື່ອທ່ານຕ້ອງອາບັຕິສັງຊາທິເສສ ອາບັຕິທຸກກະຕະ(ທີ່ຕ້ອງ)ເພາະຍັຕຕິ ອາບັຕິຖຸລລັຈຈັຍ(ທີ່ຕ້ອງ)ເພາະກັມວາຈາ ໔ ຄັ້ງ ຍ່ອມຣະງັບໄປ

ຄຳວ່າ ພິກສຸນີແມ່ນນີ້ ພຣະຜູ້ມີພຣະພາກຕຣັສຫາຽບຄຽງພິກສຸນີຮູບກ່ອນໆ

ຄຳວ່າ ຍາວຕຕິຍກະ ຄື ຕ້ອງອາບັຕິເພາະສວດສມນຸພາສນ໌ຈົບ ໓ ຄັ້ງ ບໍ່ແມ່ນຕ້ອງອາບັຕິພ້ອມກັບການລ່ວງລະເມີດວັຕຖຸ

ຄຳວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກໝູ່

ຄຳວ່າ ສັງຊາທິເສສ ຄວາມວ່າ ສຳລັບອາບັຕິນັ້ນ ສົງຊ໌ເທົ່ານັ້ນໃຫ້ມານັຕ ฯລฯ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຊາທິເສສ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຊາທິເລສກັນຫ໌] ສັງຊາທິເລສສິກຂາບົດທີ ໗ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກສັງຊາທິເສສ**

[໑໑໙] ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບໍ່ສລະ ຕ້ອງອາບັຕິ
ສັງຄາທິເສສ
ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບໍ່ສລະ ຕ້ອງອາບັຕິສັງຄາທິເສສ
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບໍ່ສລະ ຕ້ອງອາບັຕິສັງຄາທິເສສ

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໒໐] ໑. ພິກສຸນີຍັງບໍ່ຖືກສິ່ງຂໍ້ສວດສມນຸພາສນ໌
໒. ພິກສຸນີຜູ້ສລະ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສັງຄາທິເສສສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຄາທິເລສກັນທ໌] ສັງຄາທິເລສສິກຂາບົດທີ ໘ ນິທານ ວັຕຖຸ**

**ສັງຄາທິເສສສິກຂາບົດທີ ໘**

ວ່າດ້ວຍພິກສຸນີມີຄວາມປະພຶດຊົ່ວຊາມ

**ເຣື້ອງພິກສຸນີອັນເຕວາສີນີຂອງພິກສຸນີຖຸລລະນັນທາ**

[໑໒໑] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ

ຫົກເສດຖີ ເຂຕກຸງສາວັດຖີ ດັ່ງນັ້ນ ພວກພິກສຸນີອັນເຕວາສີນີຂອງພິກສຸນີຖຸລລະນັນທາຢູ່ເກືອກ ກົ້ວກັນ໑ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽມີຊື່ສຽງບໍ່ດີ໔ ມັກບຽດບຽນ ພິກສຸນີສົງຂ໌ ປົກປິດໂທສຂອງກັນແລະກັນບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນ ທາງເສື່ອມເສັຽມີຊື່ສຽງບໍ່ດີ ມັກບຽດບຽນພິກສຸນີສົງຂ໌ ປົກປິດໂທສຂອງກັນແລະກັນລະ" ຄັນ ແລ້ວພິກສຸນີເຫລົ່ານັ້ນໄດ້ນຳເອື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບພວກພິກສຸໄດ້ນຳເອື້ອງນີ້ ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີ ກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກສຸນີສົງຂ໌ ປົກປິດໂທສຂອງກັນແລະ ກັນ ແມ່ນແທ້ບໍ" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະ ເຈົ້າຊົງຕຳໜິວ່າ ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງຢູ່ເກືອກກົ້ວກັນ ມີຄວາມປະພຶດ ຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກສຸນີສົງຂ໌ ປົກປິດໂທສ ຂອງກັນແລະກັນລະ ພິກສຸທັງຫລາຍການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວ ຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ "ຢູ່ເກືອກກົ້ວກັນ" ໃນທີ່ນີ້ໝາຍເຖິງຢູ່ເກືອກກົ້ວກັນກັບພວກຄຣືຫັສຖ໌ທັງທາງກາຍ ເຊັ່ນ ການຕຳເຂົ້າ ຫຸງເຂົ້າ ບົດຂອງຫອມ ຮ້ອຍດອກໄມ້ ເປັນຕົ້ນ ແລະທາງວາຈາ ເຊັ່ນ ການຊ່ອຍສົ່ງ ຂ່າວສານ ການຊັກສື່ອ ເປັນຕົ້ນ (ວິ. ອ. ໔/໗໔໓/໔໗໐)

໔ "ມີຊື່ສຽງບໍ່ດີ" ຄືມີຄວາມເປັນຢູ່ທີ່ເສື່ອມເສັຽ ມີອາຊີພບໍ່ເໝາະສົມ (ວິ. ອ. ໔/໗໔໓/໔໗໐)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ສັງຂາທິເລສສິກຂາບົດທີ ໙ ສິກຂາບົທວິພັງຄ໌

**ພຣະບັນຍັດ**

[໗໔໔] ກໍພິກຂຸນີທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງຂ໌ ປົກປິດໂທສຂອງກັນແລະກັນ ພິກຂຸນີເຫລົ່ານັ້ນອັນພິກຂຸນີທັງຫລາຍຄວນວ່າກ່າວຕັກເຕືອນຢ່າງນີ້ວ່າ "ນ້ອງຍິງທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງຂ໌ ປົກປິດໂທສຂອງກັນແລະກັນ ນ້ອງຍິງທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດ ສົງຂ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເທົ່ານັ້ນ" ພິກຂຸນີເຫລົ່ານັ້ນອັນພິກຂຸນີທັງຫລາຍວ່າກ່າວຕັກເຕືອນຢູ່ຢ່າງນີ້ ກໍຍັງຢືນຢັນຢູ່ຢ່າງນັ້ນ ພິກຂຸນີເຫລົ່ານັ້ນອັນພິກຂຸນີທັງຫລາຍຄວນສວດສມນຸພາສນ໌ຈົນຄົບ ໓ ຄັ້ງ ເພື່ອໃຫ້ສລະເຣື່ອງນັ້ນ ຖ້າພວກທ່ານກຳລັງຖືກສວດສມນຸພາສນ໌ ກວ່າຈະຄົບ ໓ ຄັ້ງ ສລະເຣື່ອງນັ້ນໄດ້ ນັ້ນເປັນການດີ ຖ້າບໍ່ສລະ ແມ່ນພິກຂຸນີເຫລົ່ານີ້ກໍຕ້ອງທັມຄືສັງຂາທິເສສທີ່ຊື່ວ່າຍາວຕຕິຍກະນິສສາຣນີຍະ

ເຣື່ອງພິກຂຸນີອັນເຕວາສິນີຂອງພິກຂຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໔໕] ຄຳວ່າ ກໍ ພິກຂຸນີທັງຫລາຍ ພຣະຜູ້ມີພຣະພາກຕຣັສຫມາຍເຖິງມາຕຸຄາມທີ່ອຸປສົມບົທແລ້ວ

ຄຳວ່າ ຢູ່ເກືອກກົ້ວກັນ ຄື ທີ່ຊື່ວ່າ ເກືອກກົ້ວກັນ ໄດ້ແກ່ ຢູ່ເກືອກກົ້ວກັນທາງກາຍແລະທາງວາຈາທີ່ບໍ່ເຫມາະສົມ

ຄຳວ່າ ມີຄວາມປະພຶດຊົ່ວຊາມ ຄື ປະກອບດ້ວຍຄວາມປະພຶດຊົ່ວຊາມ

ຄຳວ່າ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ຄື ມີກິຕຕິສັພທ໌ເສື່ອມເສັຽແຜ່ໄປ

ຄຳວ່າ ມີຊື່ສຽງບໍ່ດີ ຄື ລ້ຽງຊີພດ້ວຍມິຈສາອາຊີວະຊົ່ວຊາມ

ຄຳວ່າ ມັກບຽດບຽນພິກຂຸນີສົງຂ໌ ຄື ເມື່ອຖືກສົງຂ໌ທຳກັມແກ່ພວກດຽວກັນກໍຄັດຄ້ານ

ຄຳວ່າ ປົກປິດໂທສຂອງກັນແລະກັນ ຄື ປົກປິດຄວາມຜິດຂອງກັນແລະກັນໄວ້

ຄຳວ່າ ພິກຂຸນີເຫລົ່ານັ້ນ ໄດ້ແກ່ ພິກຂຸນີທີ່ຢູ່ເກືອກກົ້ວກັນ

ຄຳວ່າ ອັນພິກສຸນີທັງຫລາຍ ໄດ້ແກ່ ອັນພິກສຸນີເຫລົ່າອື່ນ
ພິກສຸນີທັງຫລາຍທີ່ໄດ້ເຫັນໄດ້ຊາບຄວນວ່າກ່າວຕັກເຕືອນວ່າ "ນ້ອງຍິງທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີມັກບຽດບຽນພິກສຸນີສົງຄ໌ ປົກປິດໂທສຂອງກັນແລະກັນ ນ້ອງຍິງທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດ ສົງຄ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເທົ່ານັ້ນ"
ຄວນວ່າກ່າວຕັກເຕືອນພວກທ່ານ ແມ່ນຄັ້ງທີ ໒ ຄວນວ່າກ່າວຕັກເຕືອນພວກທ່ານແມ່ນຄັ້ງທີ ៣ ຖ້າພວກທ່ານສລະໄດ້ນັ້ນເປັນການດີ ຖ້າບໍ່ສລະ ຕ້ອງອາບັຕິທຸກກະຕະ
ພິກສຸນີທັງຫລາຍໄດ້ຍິນແລ້ວບໍ່ວ່າກ່າວຕັກເຕືອນ ຕ້ອງອາບັຕິທຸກກະຕະ ພິກສຸນີເຫລົ່ານັ້ນອັນພິກສຸນີທັງຫລາຍ ຄວນນຳມາທ່າມກາງສົງຄ໌ວ່າກ່າວຕັກເຕືອນວ່າ "ນ້ອງຍິງທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກສຸນີສົງຄ໌ ປົກປິດໂທສຂອງກັນແລະກັນ ນ້ອງຍິງທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດ ສົງຄ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເທົ່ານັ້ນ" ຄວນວ່າກ່າວຕັກເຕືອນພວກທ່ານແມ່ນຄັ້ງທີ ໒ ຄວນວ່າກ່າວຕັກເຕືອນພວກທ່ານແມ່ນຄັ້ງທີ ៣ ຖ້າພວກທ່ານສລະໄດ້ ນັ້ນເປັນການດີ ຖ້າບໍ່ສລະ ຕ້ອງອາບັຕິທຸກກະຕະ ພິກສຸນີເຫລົ່ານັ້ນອັນສົງຄ໌ຄວນສວດສມນຸພາສນ໌

**ວິທີສວດສມນຸພາສນ໌ແລະກັມວາຈາສວດສມນຸພາສນ໌**

ພິກສຸທັງຫລາຍ ກໍສົງຄ໌ຄວນສວດສມນຸພາສນ໌ພິກສຸນີເຫລົ່ານັ້ນຢ່າງນີ້ ຄື ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຄ໌ຊາບດ້ວຍຍັຕຕິຈຕຸຕຖກັມວາຈາວ່າ

[ກ໑໔] "ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີຊື່ນີ້ແລະຊື່ນີ້ຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກສຸນີສົງຄ໌ ປົກປິດໂທສຂອງກັນແລະກັນ ພວກທ່ານບໍ່ສລະເຣື້ອງນັ້ນ ຖ້າສົງຄ໌ພ້ອມກັນແລ້ວຄວນສວດສມນຸພາສນ໌ ພິກສຸນີຊື່ນີ້ແລະຊື່ນີ້ເພື່ອໃຫ້ສລະເຣື້ອງນັ້ນ ນີ້ເປັນຍັຕຕິ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເສສກັນທ໌] ສັງຂາທິເສສສິກຂາບົດທີ ໙ ບົທພາຊນີຍ໌**

ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີຊື່ນີ້ແລະຊື່ນີ້ຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊ້າມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກສຸນີສົງຂ໌ ປົກປິດໂທສຂອງກັນແລະກັນ ພວກທ່ານຍັງບໍ່ສລະເຣື່ອງນັ້ນ ສົງຂ໌ສວດສມນຸພາສນ໌ພິກສຸນີຊື່ນີ້ແລະຊື່ນີ້ເພື່ອໃຫ້ສລະເຣື່ອງນັ້ນ ແມ່ເຈົ້າຮູບໃດເຫັນດ້ວຍກັບການສວດ ສມນຸພາສນ໌ ພິກສຸນີຊື່ນີ້ແລະຊື່ນີ້ເພື່ອໃຫ້ສລະເຣື່ອງນັ້ນ ແມ່ເຈົ້າຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງ ຂ້າພະເຈົ້າກ່າວຂໍ້ຄວາມນີ້ແມ່ນຄັ້ງທີ ໒ ຯລຯ ຂ້າພະເຈົ້າກ່າວຂໍ້ຄວາມນີ້ແມ່ນຄັ້ງ ທີ ໓ ຯລຯ

ພິກສຸນີຊື່ນີ້ແລະຊື່ນີ້ສົງຂ໌ສວດສມນຸພາສນ໌ເພື່ອໃຫ້ສລະເຣື່ອງນັ້ນ ສົງຂ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້”

ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໒ ຄັ້ງ ຕ້ອງອາບັຕິຖຸລລັຈຈັຍ ຈົບກັມວາຈາຄັ້ງສຸດທ້າຍ ຕ້ອງອາບັຕິສັງຄາທິເສສ ເມື່ອທ່ານຕ້ອງອາບັຕິສັງຄາທິເສສ ອາບັຕິທຸກກະຕະ(ທີ່ຕ້ອງ) ເພາະຍັຕຕິ ອາບັຕິຖຸລລັຈຈັຍ(ທີ່ຕ້ອງ)ເພາະກັມວາຈາ ໒ ຄັ້ງ ຍ່ອມຣະງັບໄປ ສົງຂ໌ຄວນສວດສມນຸພາສນ໌ພິກສຸນີ ໒-໓ ຮູບຄາວດຽວກັນ ບໍ່ຄວນສວດສມນຸພາສນ໌ ພິກສຸນີຫລາຍກວ່ານັ້ນຄາວດຽວກັນ

ຄຳວ່າ ແມ່ນພິກສຸນີເຫລົ່ານັ້ນ ພຣະຜູ້ມີພຣະພາກຕຣັສຫຽບຄຽງພິກສຸນີຮູບກ່ອນໆ

ຄຳວ່າ ຍາວຕຕິຍກະ ຄື ຕ້ອງອາບັຕິເພາະສວດສມນຸພາສນ໌ຈົບ ໓ ຄັ້ງ ບໍ່ແມ່ນຕ້ອງອາບັຕິພ້ອມກັບການລ່ວງລະເມີດວັຕຖຸ

ຄຳວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກໝູ່

ຄຳວ່າ ສັງຄາທິເສສ ຄວາມວ່າ ສຳລັບອາບັຕິນັ້ນ ສົງຂ໌ເທົ່ານັ້ນໃຫ້ມານັຕ ຯລຯ

ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຄາທິເສສ

**ບົທພາຊນີຍ໌**

[໗໔໕] ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບໍ່ສລະ ຕ້ອງອາບັຕິສັງຄາທິເສສ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຄາທິເລສກັນທ໌] ສັງຄາທິເລສສິກຂາບົດທີ ໙ ອນາປັຕຕິວາຣ

ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບໍ່ສລະ ຕ້ອງອາບັຕິສັງຄາທິເສສ

ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບໍ່ສລະ ຕ້ອງອາບັຕິສັງຄາທິເສສ

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ຕ້ອງອາບັຕິທຸກກະຕະ

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໔໖] ໑. ພິກສຸນີຍັງບໍ່ຖືກສວດສມນຸພາສນ໌

໒. ພິກສຸນີຜູ້ສລະ

໓. ພິກສຸນີວິກົລຈິຕ

໔. ພິກສຸນີມີຈິຕປັ່ນປ່ວງ

໕. ພິກສຸນີກະວົນກະວາຍເພາະເວທນາ

໖. ພິກສຸນີຕົ້ນບັນຍັດ

ສັງຄາທິເສສສິກຂາບົດທີ ໙ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຄາທິເສສກັນຫ໌] ສັງຄາທິເສສສິກຂາບົດທີ ໑໐ ນິທານວັຕຖຸ**

**ສັງຄາທິເສສສິກຂາບົດທີ ໑໐**

ວ່າດ້ວຍການຍຸຍົງສົ່ງເສີມໃຫ້ພິກສຸນີປະພຶດຊົ່ວຊາມ

**ເລື່ອງພິກສຸນີຖຸລລະນັນທາ**

[໗໔໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາກ່າວກັບພິກສຸນີທັງຫລາຍຜູ້ຖືກສົງຄ໌ສວດສມນຸພາສນ໌ແລ້ວຢ່າງນີ້ວ່າ “ແມ່ເຈົ້າທັງຫລາຍ ພວກທ່ານຈົງຢູ່ເກືອກກົ້ວກັນເຖີດ ຢ່າແຍກກັນຢູ່ ພິກສຸນີເຫລົ່າອື່ນຜູ້ມີຄວາມປະພຶດຢ່າງນີ້ ມີກິຕຕິສັພທ໌ຢ່າງນີ້ ມີຊື່ສຽງຢ່າງນີ້ ມັກບຽດບຽນພິກສຸນີສົງຄ໌ ປົກປິດໂທສຂອງກັນແລະກັນກໍມີຢູ່ໃນສົງຄ໌ ສົງຄ໌ກໍບໍ່ໄດ້ວ່າກ່າວພິກສຸນີເຫລົ່ານັ້ນເລີຍ ສົງຄ໌

ໄດ້ແຕ່ວ່າກ່າວພວກທ່ານເຫົ່ານັ້ນດ້ວຍຄວາມດູຫມິ່ນຢຽດຫຍາມ ດ້ວຍຄວາມບໍ່ພໍໃຈ ດ້ວຍການຂົ່ມຂູ່ ເພາະພວກທ່ານອ່ອນແອຢ່າງນີ້ວ່າ 'ນ້ອງຍິງທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະ ພຶດ ຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກສຸນີສົງຂ໌ປົກປິດໂທສຂອງກັນແລະກັນ ນ້ອງຍິງທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດ ສົງຂ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເຫົ່ານັ້ນ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງກ່າວກັບພິກສຸນີທັງຫລາຍຜູ້ຖືກສົງຂ໌ສວດສມນຸພາສນ໌ແລ້ວຢ່າງນີ້ວ່າ 'ທ່ານທັງຫລາຍຈົ່ງຢູ່ເກືອກກົ້ວ ຢ່າແຍກກັນຢູ່ ພິກສຸນີເຫລົ່າອື່ນ ຯລຯ ກໍມີຢູ່ໃນສົງຂ໌ ຯລຯ ນ້ອງຍິງທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດ ສົງຂ໌ຍ່ອມສັຣເສີນການແຍກ ກັນຢູ່ຂອງນ້ອງຍິງທັງຫລາຍເຫົ່ານັ້ນ' ດັ່ງນີ້ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາກ່າວກັບພິກສຸນີທັງຫລາຍຜູ້ຖືກສົງຂ໌ສວດສມນຸພາສນ໌ແລ້ວຢ່າງນີ້ວ່າ 'ທ່ານທັງຫລາຍຈົ່ງຢູ່ເກືອກກົ້ວກັນ ຢ່າແຍກກັນຢູ່ ພິກສຸນີເຫລົ່າອື່ນຜູ້ມີຄວາມປະພຶດຢ່າງນີ້ ມີກິຕຕິສັພທ໌ຢ່າງນີ້ມີຊື່ສຽງຢ່າງນີ້ກໍມີຢູ່ໃນສົງຂ໌ ສົງຂ໌ກໍບໍ່ໄດ້ວ່າກ່າວພິກສຸນີເຫລົ່ານັ້ນເລີຍ ສົງຂ໌ໄດ້ແຕ່ວ່າກ່າວພວກທ່ານເຫົ່ານັ້ນ ດ້ວຍຄວາມດູຫມິ່ນຢຽດຫຍາມ ດ້ວຍຄວາມບໍ່ພໍໃຈ ດ້ວຍການຂົ່ມຂູ່ ເພາະພວກທ່ານອ່ອນແອ ຢ່າງນີ້ວ່າ 'ນ້ອງຍິງທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນກັນ ພິກສຸນີສົງຂ໌ປົກປິດໂທສຂອງກັນແລະກັນ ນ້ອງຍິງທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດສົງຂ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເຫົ່ານັ້ນ' ດັ່ງນີ້ ແມ່ນແທ້ບໍ" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງບອກພິກສຸນີທັງຫລາຍຜູ້ຖືກສົງຂ໌ສວດ ສມນຸພາສນ໌ແລ້ວຢ່າງນີ້ວ່າ 'ທ່ານທັງຫລາຍຈົ່ງຢູ່ເກືອກກົ້ວ ຢ່າແຍກກັນຢູ່ ພິກສຸນີເຫລົ່າອື່ນ ຯລຯ ກໍມີຢູ່ໃນສົງຂ໌ ຯລຯ ແມ່ເຈົ້າທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດ ສົງຂ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເຫົ່ານັ້ນດັ່ງນີ້ລະ ພິກສຸທັງຫລາຍການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[ກ໗໘] ກໍພິກຂຸນີໃດກ່າວຢ່າງນີ້ວ່າ "ນ້ອງຍິງທັງຫລາຍ ທ່ານທັງຫລາຍຈົ່ງຢູ່ເກືອກກົ້ວກັນ ຢ່າແຍກກັນຢູ່ ພິກຂຸນີເຫລົ່າອື່ນຜູ້ມີຄວາມປະພຶດຢ່າງນີ້ ມີກິຕຕິສັພທ໌ຢ່າງນີ້ ມີຊື່ສຽງຢ່າງນີ້ ມັກບຽດບຽນພິກຂຸນີສົງຂ໌ ປົກປິດໂທສຂອງກັນແລະກັນໄວ້ກໍມີຢູ່ໃນສົງຂ໌ ສົງຂ໌ກໍບໍ່ໄດ້ວ່າກ່າວພວກທ່ານເລີຍ ສົງຂ໌ໄດ້ແຕ່ວ່າກ່າວພວກທ່ານເທົ່ານັ້ນດ້ວຍຄວາມດູຫມິ່ນຢຽດຫຍາມ ດ້ວຍຄວາມບໍ່ພໍໃຈ ດ້ວຍກາຣຂົ່ມຂູ່ເພາະພວກທ່ານອ່ອນແອ ຢ່າງນີ້ວ່າ "ນ້ອງຍິງທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງຂ໌ ປົກປິດໂທສຂອງກັນແລະກັນ ນ້ອງຍິງທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດ ສົງຂ໌ຍ່ອມສັຣເສີນກາຣແຍກກັນຢູ່ຂອງນ້ອງຍິງທັງຫລາຍເທົ່ານັ້ນ"

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໑໐ ສິກຂາບົທວິພັງຄ໌

ພິກຂຸນີນັ້ນອັນພິກຂຸນີທັງຫລາຍຄວນວ່າກ່າວຕັກເຕືອນຢ່າງນີ້ວ່າ "ນ້ອງຍິງ ທ່ານຢ່າກ່າວຢ່າງນີ້ວ່າ 'ນ້ອງຍິງທັງຫລາຍ ທ່ານທັງຫລາຍຈົ່ງຢູ່ເກືອກກົ້ວກັນ ຢ່າແຍກກັນຢູ່ ພິກຂຸນີແມ່ນເຫລົ່າອື່ນຜູ້ມີຄວາມປະພຶດຢ່າງນີ້ ມີກິຕຕິສັພທ໌ຢ່າງນີ້ ມີຊື່ສຽງຢ່າງນີ້ ມັກບຽດບຽນພິກຂຸນີສົງຂ໌ ຊອບປົກປິດໂທສກັນໄວ້ກໍມີຢູ່ໃນສົງຂ໌ ສົງຂ໌ກໍບໍ່ໄດ້ວ່າກ່າວພິກຂຸນີເຫລົ່ານັ້ນເລີຍ ໄດ້ແຕ່ວ່າກ່າວພວກທ່ານເທົ່ານັ້ນ ດ້ວຍຄວາມດູຫມິ່ນຢຽດຫຍາມ ດ້ວຍຄວາມບໍ່ພໍໃຈ ດ້ວຍກາຣຂົ່ມຂູ່ ເພາະພວກທ່ານອ່ອນແອ ຢ່າງນີ້ວ່າ 'ນ້ອງຍິງທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກຂຸນີສົງຂ໌ ປົກປິດໂທສຂອງກັນແລະກັນ ນ້ອງຍິງທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດ ສົງຂ໌ຍ່ອມສັຣເສີນກາຣແຍກກັນຢູ່ຂອງນ້ອງຍິງທັງຫລາຍເທົ່ານັ້ນ" ພິກຂຸນີນັ້ນອັນພິກຂຸນີທັງຫລາຍວ່າກ່າວຕັກເຕືອນຢູ່ຢ່າງນີ້ ກໍຍັງຢືນຢັນຢູ່ຢ່າງນັ້ນ ພິກຂຸນີນັ້ນອັນ ພິກຂຸນີທັງຫລາຍຄວນສູດສມນຸພາສນ໌ຈົນຄົບ ໓ ຄັ້ງເພື່ອໃຫ້ສລະເຣື້ອງນັ້ນ ຖ້າທ່ານກຳລັງຖືກສູດສມນຸພາສນ໌ກວ່າຈະຄົບ ໓ ຄັ້ງສລະເຣື້ອງນັ້ນໄດ້ ນັ້ນເປັນກາຣດີ ຖ້າບໍ່ສລະແມ່ນພິກຂຸນີນີ້ກໍຕ້ອງທັມຄືສັງຂາທິເສສທີ່ຊື່ວ່າຍາວຕຕິຍກະ ນິສສາຣນີຍະ

ເຣື້ອງພິກຂຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໔໙] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄໍາວ່າ ກ່າວຢ່າງນີ້ ຄື ກ່າວວ່າ "ແມ່ເຈົ້າທັງຫລາຍ ທ່ານທັງຫລາຍຈົ່ງຢູ່ເກືອກກົ້ວກັນ ຢ່າ ແຍກກັນຢູ່ ພິກສຸນີເຫລົ່າອື່ນທີ່ມີຄວາມປະພຶດຢ່າງນີ້ ມີກິຕຕິສັພທ໌ຢ່າງນີ້ ມີຊື່ສຽງຢ່າງນີ້ ມັກບຽດບຽນພິກສຸນີສົງຂ໌ ຊອບປົກປິດໂທສກັນໄວ້ກໍມີຢູ່ໃນສົງຂ໌ ສົງຂ໌ບໍ່ວ່າກ່າວຫຍັງໆພິກສຸນີ ເຫລົ່ານັ້ນ"

ຄໍາວ່າ ສົງຂ໌ . . . ວ່າກ່າວພວກທ່ານ . . . ດ້ວຍຄວາມດູຫມິ່ນ ໄດ້ແກ່ ດ້ວຍຄວາມດູຖູກ

ຄໍາວ່າ ຢຽດຫຍາມ ໄດ້ແກ່ ຄວາມຫຍາບຄາຍ

ຄໍາວ່າ ດ້ວຍຄວາມບໍ່ພໍໃຈ ໄດ້ແກ່ ດ້ວຍຄວາມໂກດເຄືອງ

ຄໍາວ່າ ດ້ວຍການຂົ່ມຂູ່ ໄດ້ແກ່ ດ້ວຍການກໍາຣາບ

ຄໍາວ່າ ເພາະພວກທ່ານອ່ອນແອ ຄື ເພາະຄວາມບໍ່ມີພວກສົງຂ໌ວ່າກ່າວຢ່າງນີ້ວ່າ "ນ້ອງຍິງທັງ ຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກສຸນີສົງຂ໌ປົກປິດໂທສຂອງກັນແລະກັນ ທ່ານທັງຫລາຍຈົ່ງແຍກກັນຢູ່ ສົງຂ໌ ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເທົ່ານັ້ນ"

ຄໍາວ່າ ພິກສຸນີນັ້ນ ໄດ້ແກ່ ພິກສຸນີຜູ້ຊອບເວົ້າເຊັ່ນນັ້ນ

ຄໍາວ່າ ອັນພິກສຸນີທັງຫລາຍ ໄດ້ແກ່ ອັນພິກສຸນີພວກອື່ນ

ພິກສຸນີທັງຫລາຍທີ່ໄດ້ເຫັນໄດ້ຍິນຄວນວ່າກ່າວຕັກເຕືອນວ່າ "ແມ່ເຈົ້າ ທ່ານຢ່າເວົ້າຢ່າງນີ້ວ່າ 'ພວກທ່ານຈົ່ງຢູ່ເກືອກກົ້ວກັນ ຢ່າແຍກກັນ ຯລຯ ທ່ານທັງຫລາຍຈົ່ງແຍກກັນຢູ່ ສົງຂ໌ຍ່ອມສັຣເສີນ ການແຍກກັນຢູ່ຂອງນ້ອງຍິງທັງຫລາຍ" ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໔ ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສລະໄດ້ ນັ້ນເປັນການດີ ຖ້າບໍ່ສລະ ຕ້ອງອາບັຕິ ທຸກກະຕະ ພິກສຸນີທັງຫລາຍຮູ້ແຕ່ບໍ່ຕັກເຕືອນ ຕ້ອງອາບັຕິທຸກກະຕະ

ພິກສຸນີນັ້ນອັນພິກສຸນີທັງຫລາຍຄວນນໍາມາທ່າມກາງສົງຂ໌ ວ່າກ່າວຕັກເຕືອນວ່າ "ແມ່ ເຈົ້າ ທ່ານຢ່າກ່າວຢ່າງນີ້ວ່າ 'ແມ່ເຈົ້າທັງຫລາຍ ພວກທ່ານຈົ່ງເກືອກກົ້ວກັນ ຢ່າແຍກກັນຢູ່ ຯລຯ ພວກທ່ານຈົ່ງແຍກກັນຢູ່ ສົງຂ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເທົ່ານັ້ນ"

ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໔ ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໕ ຖ້າທ່ານສລະໄດ້ ນັ້ນເປັນການດີ ຖ້າບໍ່ສລະ ຕ້ອງອາບັຕິທຸກກະຕະ ພິກສຸນີນັ້ນອັນສົງຊ໌ຄວນສວດສມນຸພາສນ໌

**ວິທີສວດສມນຸພາສນ໌ແລະກັມວາຈາສວດສມນຸພາສນ໌**

ພິກສຸທັງຫລາຍ ກໍສົງຊ໌ຄວນສວດສມນຸພາສນ໌ພິກສຸນີນັ້ນຢ່າງນີ້ ຄື ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຊ໌ຊາບດ້ວຍຍັຕຕິຈຕຸຕຖກັມວາຈາວ່າ

[໗໕໐] "ແມ່ເຈົ້າ ຂໍສົງຊ໌ຈົ່ງຟັງ ພິກສຸນີຊື່ນີ້ກ່າວກັບພິກສຸນີທັງຫລາຍຜູ້ຖືກສົງຊ໌ສວດສມນຸພາສນ໌ແລ້ວຢ່າງນີ້ວ່າ 'ພວກທ່ານຈົ່ງຢູ່ເກືອກກົ້ວກັນ ຢ່າແຍກກັນຢູ່ ພິກສຸນີເຫລົ່າອື່ນທີ່ມີຄວາມປະພຶດຢ່າງນີ້ ມີກິຕຕິສັພທ໌ຢ່າງນີ້ ມີຊື່ສຽງຢ່າງນີ້ ມັກບຽດບຽນພິກສຸນີສົງຊ໌ ຊອບປົກປິດໂທສກັນໄວ້ ກໍມີຢູ່ໃນສົງຊ໌ ສົງຊ໌ກໍບໍ່ໄດ້ວ່າກ່າວພິກສຸນີເຫລົ່ານັ້ນເລີຍ ສົງຊ໌ໄດ້ແຕ່ວ່າກ່າວພວກທ່ານເທົ່ານັ້ນດ້ວຍຄວາມດູຫມິ່ນຢຽດຫຍາມດ້ວຍຄວາມບໍ່ພໍໃຈ ດ້ວຍການຂົ່ມຂູ່ ເພາະພວກທ່ານອ່ອນແອ ຢ່າງນີ້ວ່າ 'ນ້ອງຍິງທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງໃນທາງບໍ່ດີ ມັກບຽດບຽນພິກສຸນີສົງຊ໌ ປົກປິດໂທສຂອງກັນແລະກັນ ນ້ອງຍິງທັງຫລາຍພວກທ່ານຄວນແຍກກັນຢູ່ເຖີດ ສົງຊ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເທົ່ານັ້ນ" ພິກສຸນີນັ້ນຍັງບໍ່ສລະເຣື່ອງນັ້ນ ຖ້າສົງຊ໌ພ້ອມກັນແລ້ວ ກໍຄວນສວດສມນຸພາສນ໌ພິກສຸນີຊື່ນີ້ ເພື່ອໃຫ້ສລະເຣື່ອງນັ້ນ ນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຊ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີນີ້ກ່າວກັບພິກສຸນີທັງຫລາຍຜູ້ຖືກສົງຊ໌ສວດສມນຸພາສນ໌ແລ້ວຢ່າງນີ້ວ່າ 'ພວກທ່ານຈົ່ງຢູ່ເກືອກກົ້ວກັນ ຢ່າແຍກກັນຢູ່ ພິກສຸນີເຫລົ່າອື່ນທີ່ມີຄວາມປະພຶດຢ່າງນີ້ ມີກິຕຕິສັພທ໌ຢ່າງນີ້ ມີຊື່ສຽງຢ່າງນີ້ ມັກບຽດບຽນພິກສຸນີສົງຊ໌ ຊອບປົກປິດໂທສກັນໄວ້ກໍມີໃນສົງຊ໌ ສົງຊ໌ກໍບໍ່ໄດ້ວ່າກ່າວພວກທ່ານເລີຍ ສົງຊ໌ໄດ້ແຕ່ວ່າກ່າວພວກທ່ານເທົ່ານັ້ນດ້ວຍຄວາມດູຫມິ່ນຢຽດຫຍາມ ດ້ວຍຄວາມບໍ່ພໍໃຈດ້ວຍການຂົ່ມຂູ່ ເພາະພວກທ່ານອ່ອນແອ ຢ່າງນີ້ວ່າ "ນ້ອງຍິງທັງຫລາຍຢູ່ເກືອກກົ້ວກັນ ມີຄວາມປະພຶດຊົ່ວຊາມ ມີກິຕຕິສັພທ໌ໃນທາງເສື່ອມເສັຽ ມີຊື່ສຽງບໍ່ດີ ມັກບຽດບຽນພິກສຸນີສົງຊ໌ ປົກປິດໂທສຂອງກັນແລະກັນ ນ້ອງຍິງທັງຫລາຍ ພວກທ່ານຈົ່ງແຍກກັນຢູ່ເຖີດ ສົງຊ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງທັງຫລາຍເທົ່ານັ້ນ" ພິກສຸນີນັ້ນຍັງບໍ່ສລະເຣື່ອງນັ້ນ ສົງຊ໌ສວດສມນຸພາສນ໌ພິກສຸນີຊື່ນີ້ເພື່ອໃຫ້ສລະເຣື່ອງນັ້ນ ແມ່ເຈົ້າຮູບໃດເຫັນດ້ວຍກັບການສວດສມນຸພາສນ໌ພິກສຸນີຊື່ນີ້ເພື່ອໃຫ້ສລະເຣື່ອງນັ້ນ ແມ່ເຈົ້າຮູບນັ້ນຄວນນິ່ງແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງ ຂ້າພະເຈົ້າກ່າວຄວາມນີ້ແມ່ນຄັ້ງທີ ໔ ຯລຯ ຂ້າພະເຈົ້າກ່າວຄວາມນີ້ແມ່ນຄັ້ງທີ ໕ ຯລຯ

ພິກສຸນີອື່ນີ້ ສົງຂ໌ສວດສມນຸພາສນ໌ເພື່ອໃຫ້ສລະເຣື້ອງນັ້ນ ສົງຂ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນທ໌] ສັງຂາທິເລສສິກຂາບົດທີ ໑໐ ບົທພາຊນີຍ໌**

ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິຖຸລລັຈຈັຍ
ຈົບກັມວາຈາຄັ້ງສຸດທ້າຍ ຕ້ອງອາບັຕິສັງຂາທິເສສ ເມື່ອທ່ານຕ້ອງອາບັຕິສັງຂາທິເສສ ອາບັຕິທຸກກະຕະ(ທີ່ຕ້ອງ)ເພາະຍັຕຕິ ອາບັຕິຖຸລລັຈຈັຍ(ທີ່ຕ້ອງ)ເພາະກັມວາຈາ ໔ ຄັ້ງ ຍ່ອມຣະງັບໄປ
ຄຳວ່າ ພິກສຸນີແມ່ນນີ້ ພຣະຜູ້ມີພຣະພາກຕຣັສຫມາຍເຖິງພິກສຸນີຮູບກ່ອນໆ
ຄຳວ່າ ຍາວຕຕິຍກະ ຄື ຕ້ອງອາບັຕິເພາະສວດສມນຸພາສນ໌ຈົບ ໓ ຄັ້ງ ບໍ່ແມ່ນຕ້ອງອາບັຕິພ້ອມກັບການລ່ວງລະເມີດວັຕຖຸ
ຄຳວ່າ ນິສສາຣນີຍະ ໄດ້ແກ່ ເຮັດໃຫ້ຖືກໄລ່ອອກຈາກຫມູ່
ຄຳວ່າ ສັງຂາທິເສສ ຄວາມວ່າ ສຳລັບອາບັຕິນັ້ນ ສົງຂ໌ເທົ່ານັ້ນໃຫ້ມານັຕ ຊັກເຂົ້າຫາອາບັຕິເດີມ ຮຽກເຂົ້າຫມູ່ ພິກສຸນີຫລາຍຮູບກໍທຳບໍ່ໄດ້ ພິກສຸນີຮູບດຽວກໍທຳບໍ່ໄດ້ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ
ຄຳວ່າ ສັງຂາທິເສສ ນີ້ເປັນການຂນານນາມ ເປັນຄຳຮຽກຫມວດອາບັຕິນັ້ນນັ້ນເອງ ດ້ວຍເຫຕຸນັ້ນ ພຣະຜູ້ມີພຣະພາກຈຶ່ງຕຣັສວ່າ ສັງຂາທິເສສ

**ບົທພາຊນີຍ໌**

**ຕິກສັງຂາທິເສສ**

[໗໓໑] ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບໍ່ສລະ ຕ້ອງອາບັຕິສັງຂາທິເສສ
ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບໍ່ສລະ ຕ້ອງອາບັຕິສັງຂາທິເສສ
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບໍ່ສລະ ຕ້ອງອາບັຕິສັງຂາທິເສສ

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ຕ້ອງອາບັຕິທຸກກະຕະ

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ຕ້ອງອາບັຕິທຸກກະຕະ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເລສກັນຫ໌] ບົທສຣູປ**

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໖໔] ໑. ພິກສຸນີຍັງບໍ່ຖືກສວດສມນຸພາສນ໌

໔. ພິກສຸນີຜູ້ສລະ

໖. ພິກສຸນີວິກົລຈິຕ

໔. ພິກສຸນີຕົ້ນບັນຍັດ

ສັງຂາທິເສສສິກຂາບົດທີ ໑໐ ຈົບ

**ບົທສຣຸບ**

ແມ່ເຈົ້າທັງຫລາຍ ຫັມຄືສັງຂາທິເສສ ໑໗ ສິກຂາບົທ໑ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຄື ໙ ສິກຂາບົທແຣກ ຕ້ອງອາບັຕິໃນຂນະທີ່ລ່ວງລະເມີດທີດຽວ ໗ ສິກຂາບົທຫລັງ ຕ້ອງອາບັຕິເມື່ອສວດສມນຸພາສນ໌ຄົບ ໖ ຄັ້ງ ພິກສຸນີຕ້ອງອາບັຕິຂໍ້ໃດຂໍ້ນຶ່ງແລ້ວຕ້ອງປະພຶດປັກຂມານັຕ໔ໃນສົງຂ໌ ໔ ຝ່າຍ ພິກສຸນີຜູ້ປະພຶດມານັຕແລ້ວຖືກສົງຂ໌ຮຽກເຂົ້າຫມູ່ໃນສີມາທີ່ມີພິກສຸນີສົງຂ໌ ໔໐ ຮູບ ຖ້າພິກສຸນີສົງຂ໌ມີຄນະ ໔໐ ຮູບຂາດໄປແມ່ນພຽງ ໑ ຮູບ ຮຽກພິກສຸນີນັ້ນເຂົ້າຫມູ່ ພິກສຸນີນັ້ນບໍ່ເປັນອັນສົງຂ໌ຮຽກເຂົ້າຫມູ່ ແລະພິກສຸນີເຫລົ່ານັ້ນຄວຣຖືກຕຳຫນິ ນີ້ເປັນການທຳທີ່ສົມຄວຣໃນກັມນັ້ນ

**ໝາຍເຫດ :**

໑ ສັງຂາທິເສສ ໑໗ ສິກຂາບົທຂອງພິກສຸນີສົງຂ໌ນີ້ປາກົດໃນທີ່ນີ້ພຽງ ໑໐ ສິກຂາບົທ ເປັນອສາທາຣະນະບັນຍັດ ຄື ພິກສຸສົງຂ໌ບໍ່ຕ້ອງຮັກສາ ທີ່ເປັນສາທາຣະນະບັນຍັດ ຄື ພິກສຸສົງຂ໌ຕ້ອງຮັກສາດ້ວຍ ໗ ສິກຂາບົທ ຄື

(໑) ສັຢຈຣິຕຕສິກຂາບົທ ວ່າດ້ວຍການຊັກສື່ (໔) ປຖມທຸຕຖໂທສະ ຂໍ້ທີ ໑ ວ່າດ້ວຍພິກສຸນີຂັດເຄືອງມີໂທສະ (໖) ທຸຕິຍທຸຕຖໂທສະ ວ່າດ້ວຍພິກສຸນີຂັດເຄືອງມີໂທສະຂໍ້ທີ ໔ (໔) ສັງຂເພທ ວ່າດ້ວຍການທຳສົງຂ໌ໃຫ້ແຕກກັນ (໕) ສັງຂເພທານຸວັຕຕກະ ວ່າດ້ວຍພິກສຸນີຜູ້ປະພຶດຕາມກ່າວສ

ນັບສົງຄຸນພິກສຸຜູ້ທໍາລາຍສົງຄ໌ (໖) ທຸພພຈະ ວ່າດ້ວຍພິກສຸນີເປັນຄົນວ່າຍາກ (໗) ກຸລທູສກະ ວ່າດ້ວຍພິກສຸນີຜູ້ປະທຸສຮ້າຍຕະກູນ (ເບິ່ງ ວິນັຍປິດົກ ແປລ ໑/໔ລລ/໓໔໔,໓໐໑/໓໔໔,໓໗໕/໔໑ລ,໓ລ໔/໔໓໔,໔໑໑/໔໔໔-໔໕,໔໑໗/໔໕໐,໔໔໕/໔໕໕,໔໓໖/໔໖໖-໔໖໗)

໔ ປັກຂມານັຕ ຄືຣະເບີຍບປະຕິບັດໃນການອອກຈາກອາບັຕິໜັກສໍາລັບພິກສຸນີ ໃຊ້ເວລາ ໑໕ ວັນ (ກງຂາ. ອ. ໑໗໔-໑໗ລ)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ສັງຂາທິເສສກັນຫ໌] ບົທສຣູປ

ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫລາຍໃນຫົມຄືສັງຂາທິເສສ ໑໗ ສິກຂາບົທເຫລົ່ານັ້ນວ່າ "ທ່ານທັງຫລາຍບໍຣິສຸດທ໌ແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ທ່ານທັງຫລາຍບໍຣິສຸດທ໌ແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ທ່ານທັງຫລາຍບໍຣິສຸດທ໌ແລ້ວຫລື"

ແມ່ເຈົ້າທັງຫລາຍຜູ້ບໍຣິສຸດທ໌ແລ້ວໃນຫົມຄືສັງຂາທິເສສ ໑໗ ສິກຂາບົທນີ້ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

ສັງຂາທິເສສ ໑໗ ສິກຂາບົທ ຈົບ
ສັງຂາທິເສສກັນຫ໌ໃນພິກຂຸນີວິພັງຄ໌ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໕. ນິສສັຄຄີຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໑ ນິທານວັຕຖຸ ໕. ນິສສັຄຄີຍກັນຫ໌

ແມ່ເຈົ້າທັງຫລາຍ ຫົມຄືນິສສັຄຄີຍປາຈິຕຕີຍ໌ ໓໐ ສິກຂາບົທເຫລົ່ານີ້ມາສູ່ວາຣະທີ່ຈະຍົກຂຶ້ນສະແດງ ເປັນຂໍ້ໆຕາມລໍາດັບ

### ໑. ປັຕຕວັຄ

ໝວດວ່າດ້ວຍບາຕຣ

### ສິກຂາບົດທີ ໑

ວ່າດ້ວຍການສະສົມບາຕຣ

### ເລື້ອງພິກສຸນີສັພພັຄຄີຍ໌

[໗໓໓] ສຸມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນ ທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ທຳການສະສົມບາຕຣໄວ້ເປັນອັນມາກ ພວກຊາວບ້ານຍ່າງທ່ຽວຕາມວິຫາຣເຫັນເຂົ້າຈຶ່ງຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງທຳການສະສົມບາຕຣໄວ້ເປັນອັນມາກ ຈະຂາຍບາຕຣຫລືຕັ້ງຮ້ານຂາຍພາຊນະດິນເຜົາຫລື" ພິກສຸນີທັງຫລາຍໄດ້ຍິນພວກຊາວບ້ານຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງທຳການສະສົມບາຕຣລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ທຳການສະສົມບາຕຣແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງທຳການສະສົມບາຕຣລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໗໓໔] ກໍພິກສຸນີໃດທຳການສະສົມບາຕຣ ຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌໑

ເລື້ອງພິກສຸນີສັພພັຄຄີຍ໌ ຈົບ

### ສິກຂາບົທວິພັງຄ໌

[໗໓໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ບາຕຣ ໄດ້ແກ່ ບາຕຣ ໒ ຊນິດ ຄື (໑) ບາຕຣເຫລັກ (໒) ບາຕຣດິນເຜົາບາຕຣມີ ໓

ຂນາດ ຄື (໑) ບາຕຣຂນາດໃຫຍ່ (໔) ບາຕຣຂນາດກາງ (໓) ບາຕຣຂນາດນ້ອຍທີ່ຊື່ວ່າ ບາຕຣຂນາດໃຫຍ່ ຈຸເຂົ້າສຸກຈາກເຂົ້າສານ ໔ ທະນານ ຈຸຂອງຄ້ຽວເສສນຶ່ງສ່ວນສີ່໔ ຈຸກັບເຂົ້າພໍສົມຄວຣແກ່ເຂົ້າສຸກນັ້ນ

ທີ່ຊື່ວ່າ ບາຕຣຂນາດກາງ ຈຸເຂົ້າສຸກຈາກເຂົ້າສານ ໑ ທະນານ ຈຸຂອງຄ້ຽວເສສນຶ່ງສ່ວນສີ່ ຈຸກັບເຂົ້າພໍສົມຄວຣແກ່ເຂົ້າສຸກນັ້ນ

ທີ່ຊື່ວ່າ ບາຕຣຂນາດນ້ອຍ ຈຸເຂົ້າສຸກຈາກເຂົ້າສານ ເຄິ່ງທະນານ ຈຸຂອງຄ້ຽວເສສນຶ່ງສ່ວນສີ່ ຈຸກັບເຂົ້າພໍສົມຄວຣແກ່ເຂົ້າສຸກນັ້ນ

**ໝາຍເຫດ :**

໑ ບາຕຣເປັນນິສສັຄຄີຍ໌ ຄືເປັນຂອງທີ່ຕ້ອງສລະໃຫ້ຜູ້ອື່ນ ພິກສຸນີຜູ້ສະສົມບາຕຣ ຕ້ອງອາບັຕິປາຈິຕຕີຍ໌

໔ ຄືເສສນຶ່ງສ່ວນສີ່ຂອງເຂົ້າສຸກ (ວິ. ອ. ໔/໓໐໔/໔໑໕)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄີຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໑ ສິກຂາບົທວິພັງຄ໌

ບາຕຣທີ່ມີຂນາດໃຫຍ່ກວ່ານັ້ນເປັນບາຕຣທີ່ໃຊ້ບໍ່ໄດ້ ບາຕຣມີຂນາດນ້ອຍກວ່ານັ້ນກໍເປັນບາຕຣທີ່ໃຊ້ບໍ່ໄດ້

ຄຳວ່າ ທຳການສະສົມ ຄື ບາຕຣທີ່ບໍ່ໄດ້ອທິສຖານ ບໍ່ໄດ້ວິກັປ

ຄຳວ່າ ບາຕຣເປັນນິສສັຄຄີຍ໌ ຄວາມວ່າ ບາຕຣເປັນນິສສັຄຄີຍ໌ພ້ອມກັບອຣຸນຂຶ້ນ ຄືເປັນຂອງຈຳຕ້ອງສລະແກ່ສົງຂ໌ ແກ່ຄນະ ຫລືແກ່ພິກສຸນີຮູບນຶ່ງ ພິກສຸທັງຫລາຍ ກໍພິກສຸນີຄວນສລະບາຕຣທີ່ເປັນນິສສັຄຄີຍ໌ຢ່າງນີ້

### ວິທີສລະບາຕຣທີ່ເປັນນິສສັຄຄີຍ໌

#### ສລະແກ່ສົງຂ໌

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສານັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ບາຕຣນ່ອຍນີ້ຂອງຂະນ້ອຍເກີນກຳຫນົດຣາຕຣີ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະບາຕຣນ່ອຍນີ້ແກ່ສົງຂ໌" ຄັນສລະແລ້ວຄວນສະແດງອາບັຕິ ພິກສຸນີຜູ້

ສູລາດສູາມາດຄວນຮັບອາບັຕິ ຄວນຄືນບາຕຣທີ່ທ່ານສູລະໃຫ້ດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ບາຕຣນ່ວຍນີ້ຂອງພິກສຸນີຊື່ນີ້ເປັນນິສູສັຄຄີຍ໌ ທ່ານສູລະແກ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວຄວນຄືນບາຕຣນ່ວຍນີ້ໃຫ້ແກ່ພິກສຸນີຊື່ນີ້"

ສູລະແກ່ຄນະພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງຂາບຕີນພິກສຸນີຜູ້ແກ່ພັນສູາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ບາຕຣນ່ວຍນີ້ຂອງຂະນ້ອຍເກີນກຳຫນົດຣາຕຣີ ເປັນນິສູສັຄຄີຍ໌ ຂະນ້ອຍຂໍສູລະບາຕຣນ່ວຍນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສູລະແລ້ວຄວນສູະແດງອາບັຕິພິກສຸນີຜູ້ສູລາດສູາມາດຄວນຮັບອາບັຕິ ຄວນຄືນບາຕຣທີ່ທ່ານສູລະໃຫ້ດ້ວຍກ່າວວ່າ"ແມ່ເຈົ້າທັງຫລາຍຈົ່ງຟັງຂ້າພະເຈົ້າ ບາຕຣນ່ວຍນີ້ຂອງພິກສຸນີຊື່ນີ້ເປັນນິສູສັຄຄີຍ໌ ທ່ານສູລະແລ້ວແກ່ແມ່ເຈົ້າທັງຫລາຍ ຖ້າແມ່ເຈົ້າທັງຫລາຍພ້ອມກັນແລ້ວຄວນຄືນບາຕຣນ່ວຍນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສູລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ບາຕຣນ່ວຍນີ້ຂອງຂະນ້ອຍເກີນກຳຫນົດຣາຕຣີ ເປັນນິສູສັຄຄີຍ໌ ຂະນ້ອຍຂໍສູລະບາຕຣນີ້ແກ່ແມ່ເຈົ້າ" ຄັນສູລະແລ້ວຄວນສູະແດງອາບັຕິ ພິກສຸນີຜູ້ຮັບສູລະນັ້ນຄວນຮັບອາບັຕິແລ້ວຄືນບາຕຣທີ່ທ່ານສູລະໃຫ້ດ້ວຍກາຣກ່າວວ່າ "ຂະນ້ອຍຄືນບາຕຣນີ້ໃຫ້ແກ່ແມ່ເຈົ້າ"

**ບົທພາຊນີຍ໌**

**ນິສູສັຄຄີຍປາຈິຕຕີຍ໌**

[໗໖໖] ບາຕຣທີ່ເກີນກຳຫນົດຣາຕຣີ ພິກສຸນີສຳຄັນວ່າເກີນກຳຫນົດແລ້ວ ຕ້ອງອາບັຕິນິສູສັຄຄີຍປາຈິຕຕີຍ໌

ບາຕຣທີ່ເກີນກຳຫນົດຣາຕຣີ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິນິສູສັຄຄີຍປາຈິຕຕີຍ໌

ບາຕຣທີ່ເກີນກຳຫນົດຣາຕຣີ ພິກສຸນີສຳຄັນວ່າຍັງບໍ່ເກີນ ຕ້ອງອາບັຕິນິສູສັຄຄີຍປາຈິຕຕີຍ໌

ບາຕຣຍັງບໍ່ໄດ້ອທິສຖານ ພິກສຸນີສຳຄັນວ່າອທິສຖານແລ້ວ ຕ້ອງອາບັຕິນິສູສັຄຄີຍປາຈິຕຕີຍ໌

ບາຕຣຍັງບໍ່ໄດ້ວິກັປ ພິກສຸນີສຳຄັນວ່າວິກັປແລ້ວ ຕ້ອງອາບັຕິນິສູສັຄຄີຍປາຈິຕຕີຍ໌

ບາຕຣຍັງບໍ່ໄດ້ສລະ ພິກສຸນີສໍາຄັນວ່າສລະແລ້ວ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌
ບາຕຣຍັງບໍ່ໄດ້ສູນຫາຍ ພິກສຸນີສໍາຄັນວ່າສູນຫາຍແລ້ວ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌
ບາຕຣຍັງບໍ່ຈິບຫາຍ ພິກສຸນີສໍາຄັນວ່າຈິບຫາຍແລ້ວ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌
ບາຕຣຍັງບໍ່ແຕກ ພິກສຸນີສໍາຄັນວ່າແຕກແລ້ວ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌
ບາຕຣຍັງບໍ່ຖືກໂຈຣຊິງເອົາໄປ ພິກສຸນີສໍາຄັນວ່າຖືກຊິງເອົາໄປແລ້ວ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

**ຕິກທຸກກະຕະ**

ບາຕຣທີ່ເປັນນິສສັຄຄີຍ໌ ພິກສຸນີຍັງບໍ່ສລະ ໃຊ້ສອຍ ຕ້ອງອາບັຕິທຸກກະຕະ
ບາຕຣທີ່ຍັງບໍ່ເກີນກໍາຫນົດຣາຕຣີ ພິກສຸນີສໍາຄັນວ່າເກີນກໍາຫນົດແລ້ວ ຕ້ອງອາບັຕິທຸກກະຕະ
ບາຕຣທີ່ຍັງບໍ່ເກີນກໍາຫນົດຣາຕຣີ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ບາຕຣທີ່ຍັງບໍ່ເກີນກໍາຫນົດຣາຕຣີ ພິກສຸນີສໍາຄັນວ່າຍັງບໍ່ເກີນກໍາຫນົດ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໖໗] ໑. ພິກສຸນີຜູ້ອະທິສຖານພາຍໃນອຣຸນຂຶ້ນ
໒. ພິກສຸນີຜູ້ວິກັປໄວ້ພາຍໃນອຣຸນຂຶ້ນ
໓. ພິກສຸນີຜູ້ສລະໃຫ້ໄປພາຍໃນອຣຸນຂຶ້ນ
໔. ພິກສຸນີຜູ້ມີບາຕຣສູນຫາຍພາຍໃນອຣຸນຂຶ້ນ
໕. ພິກສຸນີຜູ້ມີບາຕຣຈິບຫາຍພາຍໃນອຣຸນຂຶ້ນ
໖. ພິກສຸນີຜູ້ມີບາຕຣແຕກພາຍໃນອຣຸນຂຶ້ນ
໗. ພິກສຸນີຜູ້ມີບາຕຣຖືກໂຈຣຊິງເອົາໄປພາຍໃນອຣຸນຂຶ້ນ
໘. ພິກສຸນີຜູ້ມີບາຕຣຖືກຖືວິສາສະເອົາໄປພາຍໃນອຣຸນຂຶ້ນ
໙. ພິກສຸນີຜູ້ວິກົລຈິຕ
໑໐. ພິກສຸນີຜູ້ຕົ້ນບັນຍັດ

**ເຣື້ອງບໍ່ຍອມຄືນບາຕຣໃຫ້ເຈົ້າຂອງເດີມ**

ສະໄມຍນັ້ນ ພວກພິກສຸນີສັພພັຄຄີຍ໌ບໍ່ຍອມຄືນບາຕຣທີ່ມີຜູ້ສລະໃຫ້ ພິກສຸທັງຫລາຍຈຶ່ງນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ ພຣະອົງຄ໌ຮັບສັ່ງວ່າ "ພິກສຸທັງຫລາຍ ບາຕຣທີ່ພິກສຸນີສລະໃຫ້ແລ້ວຈະບໍ່ຄືນໃຫ້ບໍ່ໄດ້ ພິກສຸນີຮູບໃດບໍ່ຄືນ ຕ້ອງອາບັຕິທຸກກະຕະ"

ສິກຂາບົດທີ ໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໔ ນິທານວັຕຖຸ**

**໑. ປັຕຕວັຄ**

**ສິກຂາບົດທີ ໔**

ວ່າດ້ວຍການແຈກອກາລຈີວອນ

**ເຣື້ອງພິກສຸນີຖຸລລະນັນທາ**

[໗໓໗] ສະໄມຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຫລາຍຮູບຈຳພັນສາໃນວັດໃກ້ຫມູ່ບ້ານແຫ່ງນຶ່ງ ມີວັຕຣປະຕິບັດສົມບູນ ມີອິຣິຍາບົຖງົດງາມ ແຕ່ມີຜ້າບໍ່ດີ ມີແຕ່ຈີວອນເກົ່າໆໄດ້ຍ່າງທາງໄປກຸງສາວັຕຖີ ອຸບາສົກອຸບາສິກາເຫັນພິກສຸນີເຫລົ່ານັ້ນແລ້ວຄິດວ່າ "ພິກສຸນີເຫລົ່ານີ້ມີວັຕຣປະຕິບັດສົມບູນ ມີອິຣິຍາບົຖງົດງາມ ແຕ່ມີຜ້າບໍ່ດີ ມີແຕ່ຈີວອນເກົ່າໆຄົງຖືກໂຈຣຊິງເອົາໄປ" ຈຶ່ງພາກັນຖວາຍອກາລຈີວອນແກ່ພິກສຸນີສິງຂ໌ພິກສຸນີຖຸລລະນັນທາກ່າວວ່າ "ພວກເຮົາກຣານກະຖິນແລ້ວ ຜ້ານີ້ເປັນກາລຈີວອນ" ແລ້ວອທິສຖານໃຫ້ແຈກກັນ ອຸບາສົກອຸບາສິກາເຫັນພິກສຸນີເຫລົ່ານັ້ນ ໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າທັງຫລາຍໄດ້ຈີວອນແດ່ບໍ່" ພິກສຸນີເຫລົ່ານັ້ນຕອບວ່າ "ຍັງບໍ່ໄດ້ຈີວອນ ແມ່ເຈົ້າຖຸລລະນັນທາກ່າວວ່າ 'ພວກເຮົາກຣານກະຖິນແລ້ວ ຜ້ານີ້ເປັນກາລຈີວອນ' ແລ້ວອທິສຖານໃຫ້ແຈກກັນ" ອຸບາສົກອຸບາສິກາຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງອທິສຖານອກາລຈີວອນ ເປັນກາລຈີວອນແລ້ວໃຫ້ແຈກກັນລະ" ພິກສຸນີທັງຫລາຍໄດ້ຍິນອຸບາສົກອຸບາສິກາຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງອທິສຖານອກາລຈີວອນເປັນກາລຈີວອນແລ້ວໃຫ້ແຈກກັນລະ" ຄັນແລ້ວ

ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຊາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄີຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໔ ສິກຂາບົທວິພັງຄ໌**

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາອທິສຖານອກາລຈີວອນເປັນກາລຈີວອນແລ້ວໃຫ້ແຈກກັນ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງອທິສ ຖານ ອກາລຈີວອນເປັນກາລຈີວອນແລ້ວໃຫ້ແຈກກັນລະ ພິກສຸທັງຫລາຍກາຣກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໓໙] ກໍພິກສຸນີໃດອທິສຖານອກາລຈີວອນເປັນກາລຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໔໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ອກາລຈີວອນ໑ ໄດ້ແກ່ (໑) ຜ້າທີ່ເກີດຂຶ້ນຕລອດ ໑໑ ເດືອນໃນເມື່ອບໍ່ໄດ້ກຣານກະຖິນ (໔) ຜ້າທີ່ເກີດຂຶ້ນຕລອດ ໗ ເດືອນໃນເມື່ອໄດ້ກຣານກະຖິນແລ້ວ (໓) ແມ່ນຜ້າທີ່ເຂົາຖວາຍເຈາະຈົງໃນກາລ ນີ້ຊື່ວ່າ ອກາລຈີວອນ

**ໝາຍເຫດ :**

໑ ອກາລຈີວອນ ຫມາຍເຖິງຈີວອນທີ່ເກີດຂຶ້ນນອກຣະດູກາລ ຄື (໑) ໃນເມື່ອບໍ່ໄດ້ກຖານກະຖິນ ຈີວອນທີ່ເກີດຂຶ້ນໃນຣະຫວ່າງແຮມ ໑ ຄໍ່າ ເດືອນ ໑໔ ເຖິງຂຶ້ນ ໑໕ ຄໍ່າ ເດືອນ ໑໑ ຂອງປີຖັດໄປ (ຕາມຈັນທຣຄຕິ) ຮວມເປັນ ໑໑ ເດືອນ ຊື່ວ່າອກາລຈີວອນ (໔) ໃນເມື່ອໄດ້ກຖານກະຖິນແລ້ວ ຈີວອນທີ່ເກີດຂຶ້ນໃນຣະຫວ່າງແຮມ ໑ ຄໍ່າ ເດືອນ ໔ ເຖິງຂຶ້ນ ໑໕ ຄໍ່າ ເດືອນ ໑໑ ໃນປີດຽວກັນ (ຕາມຈັນທຣຄຕິ) ຮວມເປັນ ໗ ເດືອນ ຊື່ວ່າອກາລຈີວອນ (໓) ສ່ວນຈີວອນທີ່ເກີດຂຶ້ນນອກເວລາທັງ ໔ ກໍຣະນີດັ່ງກ່າວນີ້ ຊື່ວ່າກາລຈີວອນ

ພິກສຸນີອທິສຖານອກາລຈີວອນເປັນກາລຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັຕິທຸກກະຕະໃນຂນະທີ່ແຈກຈີວອນ ເປັນນິສສັຄຄິຍ໌ເພາະໄດ້ມາ ຄືເປັນຂອງຈໍາຕ້ອງສລະແກ່ສົງຄ໌ ແກ່ຄນະຫລືແກ່ພິກສຸນີຮູບນຶ່ງພິກສຸທັງຫລາຍ ພິກສຸນີຄວນສລະຈີວອນທີ່ເປັນນິສສັຄຄິຍ໌ຢ່າງນີ້

**ວິທີສລະຈີວອນທີ່ເປັນນິສສັຄຄິຍ໌**

**ສລະແກ່ສົງຄ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຄ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສານັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ອກາລຈີວອນຜືນນີ້ຂະນ້ອຍອທິສຖານເປັນກາລຈີວອນແລ້ວໃຫ້ແຈກກັນ ເປັນນິສສັຄຄິຍ໌ ຂະນ້ອຍຂໍສລະອກາລຈີວອນຜືນນີ້ແກ່ສົງຄ໌" ຄັນສລະແລ້ວຄວນສະແດງອາບັຕິ ພິກສຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນອກາລຈີວອນ ທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ອກາລຈີວອນຜືນນີ້ຂອງພິກສຸນີຊື່ນີ້ເປັນນິສັຄຄິຍ໌ ທ່ານສລະແກ່ສົງຄ໌ ຖ້າສົງຄ໌ພ້ອມກັນແລ້ວຄວນຄືນອກາລຈີວອນຜືນນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ຄນະ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສລະອກາລຈີວອນຜືນນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ "ຯລຯ ຄວນຄືນອກາລຈີວອນ ຜືນນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື

ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສູລະອກາລຈີວອນຜືນນີ້ແກ່ແມ່ເຈົ້າ" ຄັນສູລະແລ້ວຄວນສະແດງອາບັຕິ ຯລຯ "ຂະນ້ອຍຄືນອກາລຈີວອນຜືນນີ້ໃຫ້ແກ່ແມ່ເຈົ້າ"໑

**ໝາຍເຫດ :**

໑ ຄວາມທີ່ຫຍໍ້ໄວ້ທຸກສິກຂາບົທໃນນິສສັຄຄິຍປາຈິຕຕີຍ໌ ຄວນປຽບທຽບໃນປັຕຕວັຄ ສິກຂາບົດທີ ໑ ນິສສັຄຄິຍກັນຫ໌ ຂໍ້ ๗໓໕ ໜ້າ ๗໙-๘໐ ໃນເຫລັ້ມນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກນິສສັຄຄິຍປາຈິຕຕີຍ໌**

[๗໔໑] ອກາລຈີວອນ ພິກສຸນີສໍາຄັນວ່າເປັນອກາລຈີວອນ ອທິສຖານເປັນກາລຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ອກາລຈີວອນ ພິກສຸນີບໍ່ແນ່ໃຈ ອທິສຖານເປັນກາລຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ອກາລຈີວອນ ພິກສຸນີສໍາຄັນວ່າເປັນກາລຈີວອນ ອທິສຖານເປັນກາລຈີວອນແລ້ວໃຫ້ແຈກກັນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

**ທຸກທຸກກະຕະ**

ກາລຈີວອນ ພິກສຸນີສໍາຄັນວ່າເປັນອກາລຈີວອນ ຕ້ອງອາບັຕິທຸກກະຕະ

ກາລຈີວອນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ກາລຈີວອນ ພິກສຸນີສໍາຄັນວ່າເປັນກາລຈີວອນ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[๗໔໔] ໑. ພິກສຸນີຜູ້ໃຫ້ແຈກອກາລຈີວອນດ້ວຍສໍາຄັນວ່າເປັນກາລຈີວອນ

໔. ພິກຂຸນີໃຫ້ແຈກກາລຈີວອນດ້ວຍສຳຄັນວ່າເປັນກາລຈີວອນ
໕. ພິກຂຸນີວິກົລຈິຕ
໔. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໕. ນິສສັຄຄິຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໕ ນິທານວັຕຖຸ ໑. ປັຕຕວັຄ

### ສິກຂາບົດທີ ໕

ວ່າດ້ວຍການແລກປ່ຽນຈີວອນ

### ເຣື່ອງພິກຂຸນີຖຸລລະນັນທາ

[໗໔໕] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີຖຸລລະນັນທາແລກປ່ຽນຈີວອນກັບພິກຂຸນີຮູບນຶ່ງໃຊ້ສອຍ ຄັ້ງນັ້ນ ພິກຂຸນີນັ້ນພັບຈີວອນເກັບໄວ້ ພິກຂຸນີຖຸລລະນັນທາໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ "ຈີວອນທີ່ທ່ານແລກປ່ຽນກັບຂະນ້ອຍຢູ່ທີ່ໃດ" ພິກຂຸນີນັ້ນຈຶ່ງນຳຈີວອນນັ້ນອອກມາໃຫ້ພິກຂຸນີຖຸລລະນັນທາດູ ພິກຂຸນີຖຸລລະນັນທາຈຶ່ງກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ຈີວອນຂອງທ່ານ ຈົ່ງນຳຈີວອນຂອງຂະນ້ອຍມາ ຈີວອນຂອງທ່ານຕ້ອງເປັນຂອງທ່ານ ຈີວອນຂອງຂະນ້ອຍຕ້ອງເປັນຂອງຂະນ້ອຍ ຈົ່ງນຳຈີວອນຂອງຂະນ້ອຍມາ ຈົ່ງຮັບເອົາຈີວອນຂອງທ່ານຄືນໄປເຖີດ" ແລ້ວຊີງເອົາຄືນ ລຳດັບນັ້ນ ພິກຂຸນີນັ້ນນຳເຣື່ອງໄປບອກພິກຂຸນີທັງຫລາຍບັນດາພິກຂຸນີຜູ້ມັກນ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ຈົ່ງໃດ ພິກຂຸນີຖຸລລະນັນທາແລກປ່ຽນຈີວອນກັບພິກຂຸນີແລ້ວຈຶ່ງຊີງເອົາຄືນລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີຖຸລລະນັນທາແລກປ່ຽນຈີວອນກັບພິກຂຸນີແລ້ວຊີງ

ເອົາຄືນແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກ ພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງແລກປ່ຽນຈີວອນກັບພິກສຸນີແລ້ວຊີງເອົາຄືນລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[ກ໒໔] ກໍພິກສຸນີໃດແລກປ່ຽນຈີວອນກັບພິກສຸນີ ພາຍຫລັງພິກສຸນີນັ້ນກ່າວຢ່າງນີ້ວ່າ "ແມ່ເຈົ້າ ຈີວອນຂອງທ່ານ ຈົ່ງນຳຈີວອນຂອງຂະນ້ອຍມາ ຈີວອນຂອງທ່ານຕ້ອງເປັນຂອງທ່ານ ຈີວອນຂອງຂະນ້ອຍຕ້ອງເປັນຂອງຂະນ້ອຍ ຈົ່ງນຳຈີວອນຂອງຂະນ້ອຍມາ ຈົ່ງຮັບເອົາຈີວອນຂອງທ່ານຄືນໄປເຖີດ" ຊີງເອົາຄືນຫລືໃຊ້ໃຫ້ຊີງເອົາຄືນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[ກ໒໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ກັບພິກສຸນີ ຄື ກັບພິກສຸນີຮູບອື່ນ
ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ຝ ຊນິດ໑ ຢ່າງໃດຢ່າງນຶ່ງຊຶ່ງມີຂນາດພໍທີ່ຈະເຮັດວິກັປໄດ້ເປັນຢ່າງຕ່ຳ
ຄຳວ່າ ແລກປ່ຽນ ຄື ແລກປ່ຽນຈີວອນເນື້ອດີກັບຈີວອນເນື້ອບໍ່ດີ ຫລືຈີວອນເນື້ອດີກັບຈີວອນເນື້ອບໍ່ດີ
ຄຳວ່າ ຊີງເອົາຄືນ ຄື ຊີງເອົາຄືນເອງ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

**ຫມາຍເຫດ :**

໑ ຈີວອນ ຝ ຊນິດ ຄື ໂຂມະ(ຈີວອນຜ້າເປືອກໄມ້) ກັປປາສິກະ(ຈີວອນຜ້າຝ້າຍ) ໂກເສຍຍະ(ຈີວອນຜ້າໄຫມ) ກັມພລະ(ຈີວອນຜ້າຂົນສັຕວ໌) ສານະ(ຈີວອນຜ້າປ່ານ) ພັງຄະ(ຈີວອນຜ້າຜສົມ) (ວິ.

໑. ໔/໔໖໔-໔໖໖/໑໔໔)

ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໖. ນິສສັຄຄີຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໖ ສິກຂາບົທວິ **ພັງຄ໌**

ຄຳວ່າ ໃຊ້ໃຫ້ຊື້ງເອົາຄືນ ຄື ໃຊ້ໃຫ້ຜູ້ອື່ນຊື້ງ ຕ້ອງອາບັຕິທຸກກະຕະ ຜູ້ຮັບຄຳສັ່ງຄັ້ງດຽວແຕ່ຊື້ງເອົາຄືນຫລາຍຄັ້ງ ຈີວອນນັ້ນເປັນນິສສັຄຄີຍ໌ ຄືເປັນຂອງຈຳຕ້ອງສລະແກ່ສົງຂ໌ແກ່ຄນະຫລືແກ່ພິກສຸນີຮູບນຶ່ງ ພິກສຸທັງຫລາຍ ພິກສຸນີຄວນສລະຈີວອນທີ່ເປັນນິສສັຄຄີຍ໌ຢ່າງນີ້

**ວິທີສລະຈີວອນທີ່ເປັນນິສສັຄຄີຍ໌**

**ສລະແກ່ສົງຂ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຂ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມືກ່າວຢ່າງນີ້ວ່າ "ແມ່ເຈົ້າ ຈີວອນຜືນນີ້ ຂະນ້ອຍແລກປ່ຽນກັບພິກສຸນີແລ້ວຊິງເອົາຄືນ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະຈີວອນຜືນນີ້ແກ່ສົງຂ໌" ຄັນສລະແລ້ວຄວນສະແດງອາບັຕິ ພິກສຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຈີວອນທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຈີວອນຜືນນີ້ຂອງພິກສຸນີຊື່ນີ້ເປັນນິສສັຄຄີຍ໌ ທ່ານສລະແກ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວຄວນຄືນຈີວອນຜືນນີ້ໃຫ້ແກ່ພິກສຸນີຊື່ນີ້"

ສລະແກ່ຄນະ ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສລະຈີວອນຜືນນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ "ຯລຯ ຄວນຄືນຈີວອນຜືນນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ນັ່ງກຣະໂຫຍ່ງ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຈີວອນຜືນນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນສະແດງອາບັຕິ ຯລຯ "ຂະນ້ອຍຄືນຈີວອນຜືນນີ້ໃຫ້ແກ່ແມ່ເຈົ້າ"

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສ຺ສັຄຄິຍກັນ຺ທ໌] ໑. ປັຕຕວັຄ ສິກຂາບົດທີ ໓ ອນາປັຕຕິວາຣ

### ບົທພາຊນີຍ໌

[໗໔໖] ອຸປສັມບັນ ພິກສຸນີສໍາຄັນວ່າເປັນອຸປສັມບັນ ແລກປ່ຽນຈີວອນກັນແລ້ວຊິງເອົາຄືນຫລືໃຊ້ຜູ້ອື່ນໃຫ້ຊິງເອົາຄືນ ຕ້ອງອາບັຕິນິສ຺ສັຄຄິຍປາຈິຕຕີຍ໌

ອຸປສັມບັນ ພິກສຸນີບໍ່ແນ່ໃຈ ແລກປ່ຽນຈີວອນກັນແລ້ວຊິງເອົາຄືນຫລືໃຊ້ຜູ້ອື່ນໃຫ້ຊິງເອົາຄືນ ຕ້ອງອາບັຕິນິສ຺ສັຄຄິຍປາຈິຕຕີຍ໌
ອຸປສັມບັນ ພິກສຸນີສໍາຄັນວ່າເປັນອນຸປສັມບັນ ແລກປ່ຽນຈີວອນກັນແລ້ວຊິງເອົາຄືນ ຫລືໃຊ້ຜູ້ອື່ນໃຫ້ຊິງເອົາຄືນ ຕ້ອງອາບັຕິນິສ຺ສັຄຄິຍປາຈິຕຕີຍ໌

### ທຸກກະຕະ

ພິກສຸນີປ່ຽນບໍຣິຂາຣຢ່າງອື່ນແລ້ວຊິງເອົາຄືນຫລືໃຊ້ຜູ້ອື່ນໃຫ້ຊິງເອົາຄືນ ຕ້ອງອາບັຕິທຸກກະຕະ
ພິກສຸນີປ່ຽນຈີວອນຫລືບໍຣິຂາຣຢ່າງອື່ນກັບອນຸປສັມບັນແລ້ວຊິງເອົາຄືນຫລືໃຊ້ຄົນອື່ນໃຫ້ຊິງເອົາຄືນ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສໍາຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສໍາຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກະຕະ໑

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໔໗] ໑. ພິກສຸນີຜູ້ຮັບແລກປ່ຽນຄືນໃຫ້ເອງ ຫລືພິກສຸນີຜູ້ແລກປ່ຽນຖືເອົາຄືນໂດຍວິສາສະຈາກພິກສຸນີຜູ້ຮັບແລກປ່ຽນແລ້ວ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໓ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໔ ນິທານວັຕຖຸ ໑. ປັຕຕວັຄ

**ສິກຂາບົດທີ ໔**

ວ່າດ້ວຍການອອກປາກຂໍຂອງຢ່າງນຶ່ງແລ້ວອອກປາກຂໍຂອງຢ່າງອື່ນ

**ເຣື້ອງພິກສຸນີຖຸລລະນັນທາ**

[၈໔၈] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາເປັນໄຂ້ຢູ່ ອຸບາສິກຄົນນຶ່ງເຂົ້າໄປຢ້ຽມເຖິງທີ່ຢູ່ຖາມວ່າ “ແມ່ເຈົ້າບໍ່ສະບາຍຫລື ຈະໃຫ້ຂະນ້ອຍນຳຫຍັງມາຖວາຍ” ນາງຕອບວ່າ “ຂະນ້ອຍຕ້ອງການເນີຍໃສ” ຄັ້ງນັ້ນ ອຸບາສິກນັ້ນນຳເນີຍໃສຣາຄາ ໑ ກຫາປນະມາຈາກບ້ານຂອງເຈົ້າຂອງຮ້ານຄ້າຄົນນຶ່ງຖວາຍແກ່ພິກສຸນີຖຸລລະນັນທາ ພິກສຸນີຖຸລລະນັນທາກ່າວຢ່າງນີ້ວ່າ “ຂະນ້ອຍບໍ່ຕ້ອງການເນີຍໃສ ແຕ່ຕ້ອງການນ້ຳມັນ” ລຳດັບນັ້ນ ອຸບາສິກນັ້ນກັບໄປຫາເຈົ້າຂອງຮ້ານຄ້າຄົນນັ້ນເຖິງທີ່ຮ້ານ ຄັນເຖິງແລ້ວໄດ້ກ່າວກັບເຈົ້າຂອງຮ້ານຄ້ານັ້ນດັ່ງນີ້ວ່າ “ແມ່ເຈົ້າບໍ່ຕ້ອງການເນີຍໃສ ແຕ່ຕ້ອງການນ້ຳມັນໂປຣດຮັບເນີຍໃສຂອງທ່ານຄືນໄປ ໂປຣດໃຫ້ນ້ຳມັນແກ່ຂະນ້ອຍ” ເຈົ້າຂອງຮ້ານຄ້າຈຶ່ງຕອບວ່າ “ນາຍ ຖ້າເຮົາຮັບຂອງທີ່ຂາຍໄປກັບຄືນອີກ ເມື່ອໃດເຮົາຈຶ່ງຂາຍສິນຄ້າໄດ້ ທ່ານຊື້ເນີຍໃສຕາມຣາຄາເນີຍໃສໄປແລ້ວ ທ່ານຈະເອົານ້ຳມັນກໍຈົ່ງນຳເງິນຄ່ານ້ຳມັນມາ”

ຄັ້ງນັ້ນ ອຸບາສິກນັ້ນຕຳໜິ ປະນາມ ໂພນທະນາວ່າ “ພິກສຸນີຖຸລລະນັນທາອອກປາກຂໍຂອງຢ່າງນຶ່ງແລ້ວ ຈັ່ງໃດຈຶ່ງອອກປາກຂໍຂອງຢ່າງອື່ນລະ” ພິກສຸນີທັງຫລາຍໄດ້ຍິນອຸບາສິກຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດແມ່ເຈົ້າຖຸລລະນັນທາອອກປາກຂໍຂອງຢ່າງນຶ່ງແລ້ວຈຶ່ງຂໍຂອງຢ່າງອື່ນລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນັ້ນໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນັ້ນໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໔ ສິກຂາບົທວິພັງຄ໌

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາອອກປາກຂໍຂອງຢ່າງນຶ່ງແລ້ວອອກປາກຂໍຂອງອີກຢ່າງນຶ່ງແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍຈັ່ງໃດພິກສຸນີຖຸລລະນັນທາອອກປາກຂໍຂອງຢ່າງນຶ່ງແລ້ວຈຶ່ງອອກປາກຂໍຂອງຢ່າງອື່ນລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງ ດັ່ງນີ້

**ພຣະບັນຍັດ**

[໗໔໙] ກໍພິກສຸນີໃດອອກປາກຂໍຂອງຢ່າງນຶ່ງແລ້ວອອກປາກຂໍຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌

ເຣື່ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໕໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ອອກປາກຂໍຂອງຢ່າງນຶ່ງແລ້ວ ຄື ອອກປາກຂໍສິ່ງຂອງຢ່າງໃດຢ່າງນຶ່ງແລ້ວ

ຄຳວ່າ ອອກປາກຂໍຂອງຢ່າງອື່ນ ຄວາມວ່າ ອອກປາກຂໍສິ່ງຂອງຢ່າງອື່ນນອກຈາກທີ່ອອກປາກຂໍໄວ້ກ່ອນນັ້ນ ຕ້ອງອາບັຕິທຸກກະຕະໃນຂນະທີ່ຂໍ ຂອງນັ້ນເປັນນິສສັຄຄີຍ໌ ເພາະໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຄ໌ ແກ່ຄນະ ຫລືແກ່ພິກສຸນີຮູບນຶ່ງ

ພິກສຸທັງຫລາຍ ພິກສຸນີຄວນສລະຂອງທີ່ເປັນນິສສັຄຄີຍ໌ນັ້ນຢ່າງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໑. ນິສສັຄຄີຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໔ ບົທພາຊນີຍ໌ ວິທີສລະຂອງທີ່ເປັນນິສສັຄຄີຍ໌**

**ສລະແກ່ສົງຄ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຂ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂອງນີ້ຂະນ້ອຍອອກປາກຂໍຂອງຢ່າງນຶ່ງແລ້ວຈຶ່ງອອກປາກຂໍມາ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະຂອງນີ້ແກ່ສົງຂ໌" ຄັນສລະແລ້ວຄວນສະແດງອາບັຕິ ພິກສຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຂອງທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວ່າວ່າ"ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກສຸນີຊື່ນີ້ເປັນນິສສັຄຄີຍ໌ ທ່ານສລະແກ່ສົງຂ໌ຖ້າສົງຂ໌ພ້ອມກັນແລ້ວຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ຄນະ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ฯລฯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ "ฯລฯ ຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ฯລฯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນສະແດງອາບັຕິ ฯລฯ "ຂະນ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

**ບົທພາຊນີຍ໌**

**ຕິກນິສສັຄຄີຍປາຈິຕຕີຍ໌**

[໗໕໑] ຂອງຢ່າງອື່ນ ພິກສຸນີສຳຄັນວ່າເປັນຂອງຢ່າງອື່ນ ອອກປາກຂໍຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄີຍປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄີຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

ຂອງຢູ່າງອື່ນ ພິກສຸນີບໍ່ແນ່ໃຈ ອອກປາກຂໍຂອງຢູ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌
ຂອງຢູ່າງອື່ນ ພິກສຸນີສຳຄັນວ່າບໍ່ແມ່ນຂອງຢູ່າງອື່ນ ອອກປາກຂໍຂອງຢູ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

**ທຸກກະຕະ**

ບໍ່ແມ່ນຂອງຢູ່າງອື່ນ ພິກສຸນີສຳຄັນວ່າເປັນຂອງຢູ່າງອື່ນ ອອກປາກຂໍຂອງທີ່ບໍ່ແມ່ນຂອງຢູ່າງອື່ນ (ນັ້ນ) ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງຢູ່າງອື່ນ ພິກສຸນີບໍ່ແນ່ໃຈ ອອກປາກຂໍຂອງທີ່ບໍ່ແມ່ນຂອງຢູ່າງອື່ນ(ນັ້ນ) ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງຢູ່າງອື່ນ ພິກສຸນີສຳຄັນວ່າບໍ່ແມ່ນຂອງຢູ່າງອື່ນ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໕໔] ໑. ພິກສຸນີຜູ້ອອກປາກຂໍຂອງນັ້ນເພີ້ມແລະອອກປາກຂໍຂອງຄູ່ຢູ່າງອື່ນ໑

໔. ພິກສຸນີສະແດງອານິສົງສ໌ແລ້ວຈຶ່ງຄ່ອຍອອກປາກຂໍ

໓. ພິກສຸນີວິກົລຈິຕ

໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ໝາຍເຫດ :**

໑ ຄືຂອງທີ່ຂໍຄັ້ງທຳອິດນັ້ນບໍ່ພໍຈຶ່ງຂໍອີກແລະຂໍຂອງທີ່ຄວນປຸງດ້ວຍກັນ ເຊັ່ນ ຂໍເນີຍໃສ່ກ່ອນແລ້ວຂໍນ້ຳມັນອີກເພື່ອໃຊ້ປຸງດ້ວຍກັນ (ວິ. ອ. ໔/໗໕໔/໔໗໓-໔໗໔)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໕ ນິທານວັຕຖຸ ໑. ປັຕຕວັຄ**

**ສິກຂາບົດທີ ໕**
ວ່າດ້ວຍການໃຫ້ຊື້ຂອງຢ່າງໜຶ່ງແລ້ວໃຫ້ຊື້ຂອງຢ່າງອື່ນ

**ເລື້ອງພິກສຸນີຖຸລລະນັນທາ**

[໗໕໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາເປັນໄຂ້ ລຳດັບນັ້ນອຸບາສິກຄົນໜຶ່ງເຂົ້າໄປຢ້ຽມພິກສຸນີຖຸລລະນັນທາເຖິງທີ່ຢູ່ ຄັນເຖິງແລ້ວໄດ້ກ່າວກັບພິກສຸນີຖຸລລະນັນທາດັ່ງນີ້ວ່າ "ແມ່ເຈົ້າຍັງສະບາຍດີຫລື ຍັງພໍເປັນຢູ່ໄດ້ຫລື" ນາງຕອບວ່າ "ທ່ານ ຂະນ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ "ເຂົາປວາຣນາວ່າ "ແມ່ເຈົ້າ ຜູ້ຂ້າຝາກກະຫາປະນະໄວ້ທີ່ບ້ານຂອງເຈົ້າຂອງຮ້ານຄ້າຊື່ພຸ້ນ ທ່ານໃຊ້ໃຫ້ຄົນໄປນຳສິ່ງທີ່ຕ້ອງການມາເຖີດ ຂະນ້ອຍ" ພິກສຸນີຖຸລລະນັນທາສັ່ງສິກຂມານາຮູບໜຶ່ງ ວ່າ "ສິກຂມານາ ທ່ານຈົ່ງໄປນຳນ້ຳມັນຣາຄາ ໑ ກະຫາປະນະ ມາຈາກບ້ານຂອງເຈົ້າຂອງຮ້ານຄ້າຊື່ພຸ້ນ" ລຳດັບນັ້ນ ສິກຂມານານັ້ນໄປນຳນ້ຳມັນຣາຄາ ໑ ກະຫາປະນະມາຈາກບ້ານຂອງເຈົ້າຂອງຮ້ານຄ້ານັ້ນ ແລ້ວໄດ້ຖວາຍແກ່ພິກສຸນີຖຸລລະນັນທາ ພິກສຸນີຖຸລລະນັນທາ ກ່າວຢ່າງນີ້ວ່າ "ເຮົາບໍ່ຕ້ອງການນ້ຳມັນ ແຕ່ຕ້ອງການເນີຍໃສ" ລຳດັບນັ້ນ ສິກຂມານານັ້ນກັບໄປຫາເຈົ້າຂອງຮ້ານຄ້າຄົນນັ້ນເຖິງທີ່ຮ້ານ ຄັນເຖິງແລ້ວໄດ້ກ່າວກັບເຈົ້າຂອງຮ້ານຄ້ານັ້ນດັ່ງນີ້ວ່າ "ແມ່ເຈົ້າບໍ່ຕ້ອງການນ້ຳມັນ ແຕ່ຕ້ອງການເນີຍໃສ ໂປຣດຮັບນ້ຳມັນຂອງທ່ານຄືນໄປ ໂປຣດໃຫ້ເນີຍໃສແກ່ຂະນ້ອຍ" ເຈົ້າຂອງຮ້ານຄ້າຈຶ່ງຕອບວ່າ "ແມ່ເຈົ້າ ຖ້າເຮົາຮັບຂອງທີ່ຂາຍໄປກັບຄືນອີກ ເມື່ອໃດເຮົາຈຶ່ງຈະຂາຍສິນຄ້າໄດ້ ທ່ານຊື້ນ້ຳມັນຕາມຣາຄານ້ຳມັນໄປແລ້ວ ທ່ານຈະເອົາເນີຍໃສກໍຈົ່ງນຳເງິນຄ່າເນີຍໃສມາ" ຄັ້ງນັ້ນ ສິກຂມານານັ້ນໄດ້ຢືນຮ້ອງໄຫ້ ພິກສຸນີທັງຫລາຍຈຶ່ງຖາມວ່າ "ທ່ານຮ້ອງໄຫ້ເພາະເຫຕຸໃດ" ທ່ານຈຶ່ງບອກເລື້ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງສັ່ງໃຫ້ຊື້ຂອງຢ່າງໜຶ່ງແລ້ວໃຫ້ຊື້ຂອງຢ່າງອື່ນລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາສັ່ງໃຫ້ຊື້ຂອງຢ່າງໜຶ່ງແລ້ວສັ່ງໃຫ້ຊື້ຂອງຢ່າງອື່ນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີ

ພຣະພຸທຸອພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາສັ່ງໃຫ້ຊື້ຂອງຢ່າງນຶ່ງແລ້ວສັ່ງໃຫ້ຊື້ຢ່າງອື່ນລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໕໔] ກໍພິກສຸນີໃດສັ່ງໃຫ້ຊື້ຂອງຢ່າງນຶ່ງແລ້ວສັ່ງໃຫ້ຊື້ຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ເຣື່ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໕໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ສັ່ງໃຫ້ຊື້ຂອງຢ່າງນຶ່ງແລ້ວ ຄື ສັ່ງໃຫ້ຊື້ຂອງຢ່າງໃດຢ່າງນຶ່ງແລ້ວ

ຄຳວ່າ ສັ່ງໃຫ້ຊື້ຂອງຢ່າງອື່ນ ຄວາມວ່າ ສັ່ງໃຫ້ຊື້ຂອງຢ່າງອື່ນນອກຈາກຂອງທີ່ໃຫ້ສັ່ງໃຫ້ຊື້ກ່ອນນັ້ນ ຕ້ອງອາບັຕິທຸກກະຕະໃນຂນະທີ່ສັ່ງໃຫ້ຊື້ ຂອງນັ້ນເປັນນິສສັຄຄິຍ໌ເພາະໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຄ໌ ແກ່ຄນະ ຫລືແກ່ພິກສຸນີຮູບນຶ່ງ ພິກສຸທັງຫລາຍ ພິກສຸນີຄວນສລະຂອງທີ່ເປັນນິສສັຄຄິຍ໌ນັ້ນ ຢ່າງນີ້

**ວິທີສລະຂອງທີ່ເປັນນິສສັຄຄິຍ໌**

**ສລະແກ່ສົງຄ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຄ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສານັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂອງນີ້ຂະນ້ອຍສັ່ງໃຫ້ຊື້ຂອງຢ່າງນຶ່ງແລ້ວຈຶ່ງສັ່ງໃຫ້ຊື້ມາ ເປັນນິສສັຄຄິຍ໌ ຂະນ້ອຍຂໍສລະຂອງນີ້ແກ່ສົງຄ໌" ຄັນສລະແລ້ວຄວນສະແດງອາບັຕິພິກສຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຂອງທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກສຸນີຊື່ນີ້ເປັນນິສສັຄຄິຍ໌ ທ່ານສລະແກ່ສົງຄ໌ ຖ້າສົງຄ໌ພ້ອມກັນແລ້ວຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສູລະແກ່ຄນະ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສູລະຂອງນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສູລະແລ້ວຄວນສະແດງອາບັຕິ "ຯລຯ ຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສູລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມືກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສູລະຂອງນີ້ແກ່ແມ່ເຈົ້າ" ຄັນສູລະແລ້ວຄວນສະແດງອາບັຕິ ຯລຯ "ຂະນ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໕ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກນິສສັຄຄິຍປາຈິຕຕີຍ໌**

[໗໕໖] ຂອງຢ່າງອື່ນ ພິກສຸນີສຳຄັນວ່າເປັນຢ່າງອື່ນ ສັ່ງໃຫ້ຊື້ຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ຂອງຢ່າງອື່ນ ພິກສຸນີບໍ່ແນ່ໃຈ ສັ່ງໃຫ້ຊື້ຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ຂອງຢ່າງອື່ນ ພິກສຸນີສຳຄັນວ່າບໍ່ແມ່ນຂອງຢ່າງອື່ນ ສັ່ງໃຫ້ຊື້ຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

**ທຸກກຸກະຕະ**

ບໍ່ແມ່ນຂອງຢ່າງອື່ນ ພິກສຸນີສຳຄັນວ່າເປັນຂອງຢ່າງອື່ນ ສັ່ງໃຫ້ຊື້ຂອງທີ່ບໍ່ແມ່ນຢ່າງອື່ນ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງຢ່າງອື່ນ ພິກສຸນີບໍ່ແນ່ໃຈ ສັ່ງໃຫ້ຊື້ຂອງທີ່ບໍ່ແມ່ນຢ່າງອື່ນ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງຢ່າງອື່ນ ພິກສຸນີສຳຄັນວ່າບໍ່ແມ່ນຂອງຢ່າງອື່ນ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໕໗] ໑. ພິກຂຸນີສັ່ງໃຫ້ຊື້ຂອງນັ້ນເພີ່ມແລະສັ່ງໃຫ້ຊື້ຂອງຄູ່ຢ່າງອື່ນ
໔. ພິກຂຸນີສະແດງອານິສົງສ໌ແລ້ວສັ່ງໃຫ້ຊື້
໖. ພິກຂຸນີວິກົລຈິຕ
໔. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໖. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໖ ນິທານວັຕຖຸ ໑. ປັຕຕວັຄ

### ສິກຂາບົດທີ ໖

ວ່າດ້ວຍການແລກປ່ຽນບໍຣິຂາຣທີ່ເຂົາຖວາຍສົງຂ໌ຂໍ້ທີ ໑

### ເຣື້ອງພິກຂຸນີຫລາຍຮູບ

[໗໕໘] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ອຸບາສົກແລະອຸບາສິກາຮວບຮວມບໍຣິຂາຣ໑ ທີ່ເຂົາໃຫ້ດ້ວຍ ຄວາມພໍໃຈເພື່ອຄ່າຈີວອນຖວາຍພິກຂຸນີສົງຂ໌ແລ້ວຝາກໄວ້ທີ່ບ້ານຂອງຄົນຂາຍຜ້າຄົນນຶ່ງແລ້ວເຂົ້າ ໄປຫາພິກຂຸນີທັງຫລາຍ ໄດ້ກ່າວດັ່ງນີ້ວ່າ “ແມ່ເຈົ້າ ພວກເຮົາຝາກບໍຣິຂາຣຄ່າຈີວອນໄວ້ທີ່ບ້ານ ຂອງຄົນຂາຍຜ້າຊື່ພຸ້ນ ທ່ານທັງຫລາຍໂປຣດໃຫ້ໄວຍາວັຈກອນໄປນຳຈີວອນຈາກບ້ານນັ້ນມາແຈກ ກັນເຖີດ ຂະນ້ອຍ”ພິກຂຸນີທັງຫລາຍໃຫ້ເອົາບໍຣິຂາຣນັ້ນແລກປ່ຽນເພສັຊເອງແລ້ວບໍຣິໂພຄ ອຸ ບາສົກແລະອຸບາສິກາຊາບເຂົ້າ ຈຶ່ງຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກຂຸນີຈຶ່ງໃຫ້ເອົາບໍ ຣິຂາຣ ທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄ ແກ່ສົງຂ໌ ແລກປ່ຽນຂອງຢ່າງອື່ນລະ” ພິກຂຸນີທັງຫລາຍໄດ້ຍິນພວກອຸບາສົກແລະອຸບາສິກາຕຳຫນິ ປະນາມ ໂພນທະນາບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ຈຶ່ງຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດ ພວກພິກຂຸນີຈຶ່ງໃຫ້ເອົາບໍຣິຂາຣ ທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍ ອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຂ໌ ແລກປ່ຽນຂອງຢ່າງອື່ນລະ ຯລຯ” ຄັນແລ້ວພິກຂຸນີ ເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລ ພຣະຜູ້ມີພຣະພາກໃຫ້ຊົງຊາບ

**ໝາຍເຫດ :**

໑ ບໍຣິຂານ ຫມາຍເຖິງກັປປິຍພັນຫ໌ ຄືຂອງທີ່ສົມຄວນແກ່ພິກສຸນີສົງຂ໌ (ກງຂາ. ອ. ໓໖໐)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໖ ສິກຂາບົດວິພັງຄ໌

### ຊົງປະຊຸມສົງຂ໌ບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຂ໌ ແລກປ່ຽນຂອງຢ່າງອື່ນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຂ໌ ແລກປ່ຽນຂອງຢ່າງອື່ນລະ ພິກສຸທັງຫລາຍການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໗໕໙] ກໍພິກສຸນີໃດໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຂ໌ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

### ສິກຂາບົດວິພັງຄ໌

[໗໖໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ຄື ຂອງທີ່ທາຍົກຖວາຍເປັນມູລຄ່າປັຈຈັຍຢ່າງນຶ່ງ

ຄຳວ່າ ທີ່ເຂົາບໍຣິຈາຄແກ່ສົງຂ໌ ຄື ທີ່ເຂົາບໍຣິຈາຄເພື່ອປໂຍດແກ່ສົງຂ໌ ບໍ່ແມ່ນແກ່ຄນະ ບໍ່ແມ່ນແກ່ບຸຄຄົລ

ຄຳວ່າ ໃຫ້ . . . ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນເປັນປັຈຈັຍຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັຕິທຸກກະຕະໃນຂນະທີ່ໃຫ້ແລກປ່ຽນຂອງນັ້ນເປັນນິສສັຄຄີຍ໌ເພາະໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຂ໌ ແກ່ຄນະ ຫລືແກ່ພິກສຸນີຮູບນຶ່ງ

ພິກສຸທັງຫລາຍ ພິກສຸນີຄວນສລະຂອງທີ່ເປັນນິສສັຄຄີຍ໌ ຢ່າງນີ້

## ວິທີສລະຂອງທີ່ເປັນນິສສັຄຄີຍ໌

### ສລະແກ່ສົງຂ໌

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂອງນີ້ຂະນ້ອຍໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງທີ່ເຂົາບໍຣິຈາຄແກ່ສົງຂ໌ ແລກປ່ຽນມາ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະຂອງນີ້ແກ່ສົງຂ໌" ຄັນສລະແລ້ວຄວນສະແດງອາບັຕິ

ພິກສຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຂອງທີ່ທ່ານສລະໃຫ້ນັ້ນດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກສຸນີຊື່ນີ້ເປັນນິສສັຄຄີຍ໌ ທ່ານສລະແກ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

### ສລະແກ່ຄນະ

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ "ຯລຯ ຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

### ສລະແກ່ບຸຄຄົລ

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ນັ່ງກຣະໂຫຍ່ງ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນສະ

ແດງອາບັຕິ ຯລຯ "ຂະນ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໖. ນິສສັຄຄິຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໖ ອນາປັຕຕິວາຣ

### ບົທພາຊນີຍ໌

### ຕິກນິສສັຄຄິຍປາຈິຕຕີຍ໌

[ໆ໖໑] ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍ ເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌ ພິກສຸນີໄດ້ຂອງທີ່ສລະແລ້ວຄືນມາຄວນຣວມກັບປັຈຈັຍທີ່ເຂົາຖວາຍໄວ້

### ທຸກທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ບໍ່ຕ້ອງອາບັຕິ

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[ໆ໖໔] ໑. ພິກສຸນີນຳກັປປິຍພັນທ໌ທີ່ເຫລືອໄປໃຊ້ເພື່ອປໂຍດຢ່າງອື່ນ

໔. ພິກສຸນີຂໍອນຸຍາຕເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປໂຍດຢ່າງອື່ນ

໖. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ຝ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໗ ນິທານວັຕຖຸ ໑. ປັຕຕວັຄ**

**ສິກຂາບົດທີ ໗**

ວ່າດ້ວຍການແລກປ່ຽນບໍຣິຂາຣທີ່ເຂົາຖວາຍສົງຂ໌ຂໍ້ທີ ໔

**ເຣື້ອງພິກສຸນີຫລາຍຮູບ**

[໗໘໓] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ອຸບາສົກແລະອຸບາສິກາຣວບຣວມບໍຣິຂາຣທີ່ເຂົາໃຫ້ດ້ວຍຄວາມພໍໃຈເພື່ອຄ່າຈີວອນຖວາຍພິກສຸນີສົງຂ໌ແລ້ວຝາກໄວ້ທີ່ບ້ານຂອງຄົນຂາຍຜ້າຄົນນຶ່ງແລ້ວເຂົ້າໄປຫາພິກສຸນີທັງຫລາຍ ໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ພວກເຮົາຝາກບໍຣິຂາຣຄ່າຈີວອນໄວ້ທີ່ບ້ານຂອງຄົນຂາຍຜ້າຊື່ພຸ້ນ ທ່ານທັງຫລາຍໂປຣດໃຫ້ໄວຍາວັຈກອນໄປນຳຈີວອນຈາກບ້ານນັ້ນມາແຈກກັນເຖີດ ຂະນ້ອຍ"ພິກສຸນີທັງຫລາຍຂໍໃຫ້ເອົາບໍຣິຂາຣນັ້ນແລກປ່ຽນເພສັຊເອງແລ້ວບໍຣິໂພຄ ພວກອຸບາສົກແລະອຸບາສິກາຊາບເຂົ້າ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຂ໌ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ" ພິກສຸນີທັງຫລາຍໄດ້ຍິນອຸບາສົກແລະອຸບາສິກາຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງໄວ້ຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຂ໌ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນັ້ນໄປບອກພິກສຸທັງຫລາຍ ພວກພິກສຸໄດ້ນຳເຣື້ອງນັ້ນໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກສຸ

ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຂ໌ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຂ໌ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍ ຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[ກຝ໔] ກໍພິກສຸນີໃດໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຂ໌ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[ກຝ໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ຄຳວ່າ ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ຄືຂອງທີ່ທາຍົກຖວາຍເປັນມູລຄ່າປັຈຈັຍຢ່າງນຶ່ງ
ຄຳວ່າ ທີ່ເຂົາບໍຣິຈາຄແກ່ສົງຂ໌ ຄື ທີ່ເຂົາບໍຣິຈາຄເພື່ອປໂຍດແກ່ສົງຂ໌ ບໍ່ແມ່ນແກ່ຄນະ ບໍ່ແມ່ນແກ່ບຸຄຄົລ
ຄຳວ່າ ທີ່ຂອມາເອງ ຄື ຂອມາແລ້ວເອງ
ຄຳວ່າ ໃຫ້ . . . ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນເປັນປັຈຈັຍຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັຕິທຸກກະຕະໃນຂນະທີ່ໃຫ້ແລກປ່ຽນຂອງນັ້ນ ເປັນນິສສັຄຄິຍ໌ເພາະ

ໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຊ໌ ແກ່ຄນະ ຫລືແກ່ພິກສຸນີຮູບນຶ່ງ
ພິກສຸທັງຫລາຍ ພິກສຸນີຄວນສລະຂອງທີ່ເປັນນິສສັຄຄີຍ໌ຢ່າງນີ້

**ວິທີສລະຂອງທີ່ເປັນນິສສັຄຄີຍ໌**

**ສລະແກ່ສົງຊ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຊ໌ ຫົ່ມອຸຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມືກ່າວຢ່າງນີ້ວ່າ “ແມ່ເຈົ້າ ຂອງນີ້ຂະນ້ອຍໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດ ແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ສົງຊ໌ ທີ່ຂໍມາເອງ ແລກປ່ຽນ ມາ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະຂອງນີ້ແກ່ສົງຊ໌” ຄັນສລະແລ້ວຄວນສະແດງອາບັຕິພິກສຸນີຜູ້ ສລາດສາມາດຄວນຮັບອາບັຕິ ຄວນຄືນຂອງທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວາຈາວ່າ “ແມ່ເຈົ້າ ຂໍສົງຊ໌ຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກສຸນີຊື່ນີ້ເປັນນິສສັຄຄີຍ໌ ທ່ານສລະແກ່ສົງຊ໌ ຖ້າສົງຊ໌ພ້ອມ ກັນແລ້ວຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້”

**ສລະແກ່ຄນະ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີ ຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ “ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ ແມ່ເຈົ້າທັງຫລາຍ” ຄັນສລະແລ້ວຄວນສະແດງອາບັຕິ “ຯລຯ ຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້”

**ສລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ “ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າ” ຄັນສລະແລ້ວຄວນສະແດງ ອາບັຕິ
ຯລຯ “ຂະນ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ”

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄີຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໗ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກນິສສັຄຄິຍປາຈິຕຕິຍ໌**

[໗໖໖] ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍ ເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ພິກສຸນີໄດ້ຂອງທີ່ສລະແລ້ວຄືນມາຄວນຣວມກັບປັຈຈັຍທີ່ເຂົາຖວາຍໄວ້

**ທຸກກຸກກະຕະ**

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໖໗] ໑. ພິກສຸນີນຳກັປປິຍພັນທ໌ທີ່ເຫລືອໄປໃຊ້ເພື່ອປໂຍດຢ່າງອື່ນ

໒. ພິກສຸນີຂໍອນຸຍາຕເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປໂຍດຢ່າງອື່ນ

໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໘ ນິທານວັຕຖຸ**

**໑. ປັຕຕວັຄ**

**ສິກຂາບົດທີ ໗**

ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍຄນະຂໍ້ທີ ໑

**ເຣື້ອງພິກສຸນີຫລາຍຮູບ**

[໗໓໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍອາສັຍຢູ່ໃນບໍຣິເວນຂອງສະມາຄົມແຫ່ງນຶ່ງ ອັຕຄັດເຂົ້າປຽກ ສະມາຄົມນັ້ນຈຶ່ງຮວບຮວມບໍຣິຂານທີ່ເຂົາໃຫ້ດ້ວຍຄວາມພໍເພື່ອຄ່າເຂົ້າຕົ້ມຖວາຍ ພິກສຸນີທັງຫລາຍແລ້ວຝາກໄວ້ທີ່ບ້ານຂອງເຈົ້າຂອງຮ້ານຄ້າຄົນນຶ່ງແລ້ວເຂົ້າໄປຫາພິກສຸນີທັງຫລາຍ ໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ພວກເຮົາຝາກບໍຣິຂານຄ່າເຂົ້າຕົ້ມໄວ້ທີ່ບ້ານຂອງເຈົ້າຂອງຮ້ານຄ້າຊື່ພຸ້ນ ທ່ານທັງຫລາຍໂປຣດໃຫ້ໄວຍາວັຈກອນໄປນຳເຂົ້າສານຈາກບ້ານນັ້ນມາຫຸງຕົ້ມສັນເຖີດ ຂະນ້ອຍ" ພິກສຸນີທັງຫລາຍໃຫ້ເອົາບໍຣິຂານນັ້ນແລກປ່ຽນເພສັຊແລ້ວບໍຣິໂພຄສະມາຄົມນັ້ນຊາບເຂົ້າ ຈຶ່ງ ຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປໂຍດ ແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍ ແລກ ປ່ຽນຂອງຢ່າງອື່ນລະ" ພິກສຸນີທັງຫລາຍໄດ້ຍິນສະມາຄົມນັ້ນຕຳໜິ ປະນາມ ໂພນທະນາ ບັນດາ ພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍ ຣິຂານ ທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງທີ່ເຂົາບໍຣິຈາຄ ແກ່ພິກສຸນີຈຳນວນຫລາຍ ແລກປ່ຽນຂອງຢ່າງອື່ນລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງ ຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປໂຍດແກ່ ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍແລກປ່ຽນ ຂອງຢ່າງອື່ນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີ ພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍຣິຂານ ທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ ພິກສຸນີຈຳນວນຫລາຍແລກປ່ຽນຂອງຢ່າງອື່ນລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດ

ໃຫ້ດິນທີ່ຍັງບໍ່ເຫລື້ອມໃສ່ໃຫ້ເຫລື້ອມໃສ ຫລືເຮັດໃຫ້ດິນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສ ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໘] ກໍພິກສຸນີໃດໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສ ຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສ ສັຄຄີຍປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໗໗໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ນີ້ທີ່ພຣະຜູ້ພຣະພາຄຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ຄື ຂອງທີ່ທາຍົກຖວາຍເປັນມູລຄ່າປັຈຈັຍຢ່າງນຶ່ງ

ຄຳວ່າ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍ ຄື ທີ່ເຂົາບໍຣິຈາຄເພື່ອປໂຍດແກ່ຄນະ ບໍ່ແມ່ນ ແກ່ສົງຂ໌ ບໍ່ແມ່ນແກ່ບຸຄຄົລ

ຄຳວ່າ ໃຫ້ . . . ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນເປັນປັຈຈັຍຢ່າງອື່ນນອກຈາກທີ່ ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັຕິທຸກກະຕະໃນຂນະທີ່ໃຫ້ແລກປ່ຽນຂອງນັ້ນເປັນນິສສັຄຄີຍ໌ເພາະ ໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຂ໌ ແກ່ຄນະ ຫລືແກ່ພິກສຸນີຮູບດຽວ

ພິກສຸທັງຫລາຍ ພິກສຸນີຄວນສລະຂອງທີ່ເປັນນິສສັຄຄີຍ໌ຢ່າງນີ້

**ວິທີສລະຂອງທີ່ເປັນນິສສັຄຄີຍ໌**

**ສລະແກ່ສົງຂ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມືກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂອງນີ້ຂະນ້ອຍໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດ ແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍ ແລກ ປ່ຽນມາ ເປັນນິສສັຄຄີຍ໌ຂະນ້ອຍຂໍສລະຂອງນີ້ແກ່ສົງຂ໌" ຄັນສລະແລ້ວຄວນສະແດງອາບັຕິ ພິກສຸນີ

ຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຂອງທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກສຸນີຊື່ນີ້ເປັນນິສສັຄຄິຍ໌ ທ່ານສລະແກ່ສົງຂ໌ ຖ້າສົງຂ໌ພ້ອມ ກັນແລ້ວຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ຄນະ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງຂາບຕີນພິກສຸນີຜູ້ ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ "ຯລຯ ຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ນັ່ງກຣະໂຫຍ່ງ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນແສະ ແດງອາບັຕິ ຯລຯ "ຂະນ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໗ ອນາປັຕຕິ ວາຣ

**ບົທພາຊນີຍ໌**

**ຕິກນິສສັຄຄິຍປາຈິຕຕິຍ໌**

[໗໗໑] ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍ ເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງ ອາບັຕິນິສສັຄຄິຍປາຈິຕຕິຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປ ໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ພິກສຸນີໄດ້ຂອງທີ່ສລະແລ້ວຄືນມາຄວນຮວມກັບປັຈຈັຍທີ່ເຂົາຖວາຍໄວ້

**ທຸກກຸກກະຕະ**

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສໍາຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສໍາຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໗໔] ໑. ພິກສຸນີນໍາກັປປິຍພັນທ໌ທີ່ເຫລືອໄປໃຊ້ເພື່ອປໂຍດຢ່າງອື່ນ

໔. ພິກສຸນີຂໍອນຸຍາຕເຈົ້າຂອງກ່ອນຈຶ່ງນໍາໄປໃຊ້ເພື່ອປໂຍດຢ່າງອື່ນ

໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໘ ນິທານວັຕຖຸ ໑. ປັຕຕວັຄ**

**ສິກຂາບົດທີ ໘**

ວ່າດ້ວຍການແລກປ່ຽນບໍຣິຂາຣທີ່ເຂົາຖວາຍແກ່ຄນະຂໍ້ທີ ໔

**ເຣື້ອງພິກສຸນີຫລາຍຮູບ**

[໗໗໓] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍທີ່ອາສັຍຢູ່ໃນບໍຣິເວນຂອງສມາຄົມແຫ່ງນຶ່ງອັຕຄັດເຂົ້າຕົ້ມ ສມາຄົມນັ້ນຈຶ່ງຮວບຮວມບໍຣິຂາຣທີ່ເຂົາໃຫ້ດ້ວຍຄວາມພໍໃຈເພື່ອຄ່າເຂົ້າຕົ້ມຖວາຍພິກສຸນີທັງຫລາຍແລ້ວຝາກໄວ້ທີ່ບ້ານຂອງເຈົ້າຂອງຮ້ານຄ້າຄົນນຶ່ງ ແລ້ວເຂົ້າໄປຫາພິກສຸນີທັງ

ຫລາຍ ໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ພວກເຮົາຝາກບໍຣິຂາຣຄ່າເຂົ້າຕົ້ມໄວ້ທີ່ບ້ານຂອງເຈົ້າຂອງຮ້ານຄ້າຊື່ພຸ້ນ ທ່ານທັງຫລາຍໂປຣດໃຫ້ໄວຍາວັຈກອນໄປນຳເຂົ້າສາຣຈາກບ້ານນັ້ນມາຫຸງຕົ້ມສັນເຖີດ ຂະນ້ອຍ" ພິກສຸນີທັງຫລາຍຂໍໃຫ້ເອົາບໍຣິຂາຣນັ້ນແລກປ່ຽນເພສັຊເອງແລ້ວບໍຣິໂພຄ ສຸມາຄົມນັ້ນຊາບເຂົ້າ ຈຶ່ງຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ" ພິກສຸນີທັງຫລາຍໄດ້ຍິນສຸມາຄົມນັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະ ນາ ວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍ ທີ່ຂອມາເອງ ແລກປ່ຽນຂອງ ຢ່າງອື່ນລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເອື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເອື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໔] ກໍພິກສຸນີໃດໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍ ທີ່ຂໍມາເອງ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕິຍ໌

ເລື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໗໗໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ຄຳວ່າ ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ຄືຂອງທີ່ທາຍົກຖວາຍເປັນມູລຄ່າປັຈຈັຍຢ່າງນຶ່ງ

ຄຳວ່າ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍ ຄື ທີ່ເຂົາບໍຣິຈາຄເພື່ອປໂຍດແກ່ຄນະ ບໍ່ແມ່ນແກ່ສົງຂ໌ ບໍ່ແມ່ນແກ່ບຸຄຄົລ

ຄຳວ່າ ທີ່ຂໍມາເອງ ຄື ຂໍມາແລ້ວເອງ

ຄຳວ່າ ໃຫ້ . . . ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນເປັນປັຈຈັຍຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັຕິທຸກກະຕະໃນຂນະທີ່ໃຫ້ແລກປ່ຽນຂອງນັ້ນເປັນນິສສັຄຄີຍ໌ເພາະໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຂ໌ ແກ່ຄນະ ຫລືແກ່ພິກສຸນີຮູບດຽວ

ພິກສຸທັງຫລາຍ ພິກສຸນີຄວນສລະຂອງທີ່ເປັນນິສສັຄຄີຍ໌ຢ່າງນີ້

**ວິທີສລະທີ່ເປັນນິສັຄຄີຍ໌**

**ສລະແກ່ສົງຂ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສານັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ “ແມ່ເຈົ້າ ຂອງນີ້ຂະນ້ອຍໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ພິກສຸນີຈຳນວນຫລາຍທີ່ຂໍມາເອງ ແລກປ່ຽນມາ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະຂອງນີ້ແກ່ສົງຂ໌” ຄັນສລະແລ້ວຄວນສະແດງອາບັຕິ ພິກສຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຂອງ ທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວາຈາວ່າ “ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກສຸນີຊື່ນີ້ເປັນນິສສັຄຄີຍ໌ ທ່ານສລະແກ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້”

**ສລະແກ່ຄນະ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງຂາບຕີນພິກສຸນີຜູ້

ແກ່ພັນສູາ ນັ່ງຄຸເຂົ່າ ປະນົມມື ກ່າວຢູ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສູລະຂອງນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສູລະແລ້ວຄວນສູະແດງອາບັຕິ "ຯລຯ ຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສູລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢູ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສູລະຂອງນີ້ແກ່ແມ່ເຈົ້າ" ຄັນສູລະແລ້ວຄວນສູະແດງອາບັຕິ ຯລຯ "ຂະນ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສູສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໙ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກນິສູສັຄຄິຍປາຈິຕຕີຍ໌**

[໗໗໕] ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ພິກສຸນີສູຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ໃຫ້ແລກປ່ຽນຂອງຢູ່າງອື່ນຕ້ອງອາບັຕິນິສູສັຄຄິຍປາຈິຕຕີຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ພິກສຸນີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢູ່າງອື່ນ ຕ້ອງອາບັຕິນິສູສັຄຄິຍປາຈິຕຕີຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ພິກສຸນີສູຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ໃຫ້ແລກປ່ຽນຂອງຢູ່າງອື່ນ ຕ້ອງອາບັຕິນິສູສັຄຄິຍປາຈິຕຕີຍ໌

ພິກສຸນີໄດ້ຂອງທີ່ສູລະແລ້ວຄືນມາຄວນຣວມກັບປັຈຈັຍທີ່ເຂົາຖວາຍໄວ້

**ທຸກກຸກະຕະ**

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ພິກສຸນີສູຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ພິກສຸນີສູຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢູ່າງນຶ່ງ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໗໗] ໑. ພິກສຸນີນໍາກັປປິຍພັນທ໌ທີ່ເຫລືອໄປໃຊ້ເພື່ອປໂຍຄຢ່າງອື່ນ
໒. ພິກສຸນີຂໍອະນຸຍາດເຈົ້າຂອງກ່ອນຈຶ່ງນໍາໄປໃຊ້ເພື່ອປຣະໂຍຊ໌ຢ່າງອື່ນ
໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ
ສິກຂາບົດທີ ໙ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໑໐ ນິທານວັຕຖຸ**

**໑. ປັຕຕວັຄ**

**ສິກຂາບົດທີ ໑໐**
ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍແກ່ບຸຄຄົລ

**ເຣື່ອງພິກສຸນີຖຸລລະນັນທາ**
[໗໗໘] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວທັມມິກຖາ ຄົນຈໍານວນຫລາຍເຂົ້າໄປຫາພິກສຸນີຖຸລລະນັນທານັ້ນ ສມັຍນັ້ນ ບໍຣິເວນທີ່ຢູ່ຂອງພິກສຸນີຖຸລລະນັນທາເປ່ເພ ຊາວບ້ານໄດ້ກ່າວກັບພິກສຸນີຖຸລລະນັນທາດັ່ງນີ້ວ່າ “ແມ່ເຈົ້າ ເພາະເຫຕຸໃດບໍຣິເວນທີ່ຢູ່ຂອງທ່ານຈຶ່ງເປ່ເພລະ” ນາງຕອບວ່າ “ເພາະບໍ່ມີທາຍົກ ຜູ້ກໍ່ສ້າງສ້ອມແປງກໍບໍ່ມີ” ຄົນທັງຫລາຍຈຶ່ງຮອບຮອມບໍຣິຂານທີ່ເຂົາໃຫ້ດ້ວຍຄວາມພໍໃຈເປັນຄ່າບູຣນະບໍຣິເວນຖວາຍພິກສຸນີຖຸລລະນັນທາ ແຕ່ພິກສຸນີຖຸລລະນັນທາຂໍໃຫ້ເອົາບໍຣິຂານນັ້ນແລກປ່ຽນເພສັຊເອງແລ້ວບໍຣິໂພຄພວກຊາວບ້ານຊາບເຣື່ອງເຂົ້າ ຈຶ່ງຕໍາໜິ ປະນາມ ໂພນທະນາວ່າ “ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປໂຍຄແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ບຸຄຄົລ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້

ນຳເອົາເລື່ອງນີ້ໄປບອກພິກສຸນີທັງຫລາຍໃຫ້ຊາບ ພວກພິກສຸນີຈຶ່ງໄດ້ນຳເອົາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເລື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ບຸຄຄົລທີ່ຂອມາເອງແລກປ່ຽນຂອງຢ່າງອື່ນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ບຸຄຄົລ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໙] ກໍພິກສຸນີໃດໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ບຸຄຄົລ ທີ່ຂອມາເອງ ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ເລື່ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໘໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ຄຳວ່າ ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ຄືຂອງທີ່ທາຍົກຖວາຍເປັນມູລຄ່າປັຈຈັຍຢ່າງນຶ່ງ

ຄຳວ່າ ທີ່ເຂົາບໍຣິຈາຄແກ່ບຸຄຄົລ ຄື ທີ່ເຂົາບໍຣິຈາຄເພື່ອປໂຍດແກ່ບຸຄຄົລ ບໍ່ແມ່ນແກ່ສົງຂ໌ ບໍ່ແມ່ນແກ່ຄະນະ

ຄຳວ່າ ທີ່ຂອມາເອງ ຄື ຂອມາແລ້ວເອງ
ຄຳວ່າ ໃຫ້ . . . ແລກປ່ຽນຂອງຢ່າງອື່ນ ຄວາມວ່າ ໃຫ້ແລກປ່ຽນປັຈຈັຍຢ່າງອື່ນນອກຈາກທີ່ເຂົາຖວາຍເຈາະຈົງໄວ້ ຕ້ອງອາບັຕິທຸກກະຕະໃນຂນະທີ່ໃຫ້ແລກປ່ຽນ ຂອງນັ້ນເປັນນິສສັຄຄີຍ໌ເພາະໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຂ໌ ແກ່ຄນະ ຫລືແກ່ພິກສຸນີຮູບດຽວ
ພິກສຸທັງຫລາຍ ພິກສຸນີຄວນສລະຂອງທີ່ເປັນນິສສັຄຄີຍ໌ຢ່າງນີ້

**ວິທີສລະຂອງທີ່ເປັນນິສສັຄຄີຍ໌**

**ສລະແກ່ສົງຂ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂອງນີ້ຂະນ້ອຍໃຫ້ເອົາບໍຣິຂາຣທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ທີ່ເຂົາຖວາຍອຸທິສຂອງຢ່າງນຶ່ງ ທີ່ເຂົາບໍຣິຈາຄແກ່ບຸຄຄົລທີ່ຂໍມາເອງ ແລກປ່ຽນມາ ເປັນນິສສັຄຄີຍ໌ ຂະນ້ອຍຂໍສລະຂອງນີ້ແກ່ສົງຂ໌" ຄັນສລະແລ້ວຄວນສະແດງອາບັຕິ ພິກສຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຂອງທີ່ທ່ານສລະໃຫ້ດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຂອງນີ້ຂອງພິກສຸນີຊື່ນີ້ເປັນນິສສັຄຄີຍ໌ ທ່ານສລະແກ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

ສລະແກ່ຄນະພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ "ຯລຯ ຄວນຄືນຂອງນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຂອງນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນສະແດງອາບັຕິ ຯລຯ "ຂະນ້ອຍຄືນຂອງນີ້ໃຫ້ແກ່ແມ່ເຈົ້າ"

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [ຝ. ນິສສັຄຄີຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ 10 ອນາປັຕຕິວາຣ**

**ບິທພຼາຊນີຍ໌**

**ຕິກນິສ຺ສັຄຄີຍປາຈິຕຕີຍ໌**

[໗໗໑] ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສ຺ສັຄຄີຍປາຈິຕຕີຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີບໍ່ແນ່ໃຈ ໃຫ້ແລກປ່ຽນຂອງຢ່າງອື່ນ ຕ້ອງອາບັຕິນິສ຺ສັຄຄີຍປາຈິຕຕີຍ໌

ຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ໃຫ້ແລກປ່ຽນຂອງອື່ນ ຕ້ອງອາບັຕິນິສ຺ສັຄຄີຍປາຈິຕຕີຍ໌

ພິກສຸນີໄດ້ຂອງທີ່ສຼະແລ້ວຄືນມາຄວນຣວມກັບປັຈຈັຍທີ່ເຂົາຖວາຍໄວ້ເດີມ

**ທຸກກຸກກະຕະ**

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າເປັນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ພິກສຸນີສຳຄັນວ່າບໍ່ແມ່ນຂອງທີ່ເຂົາຖວາຍເພື່ອປໂຍດແກ່ປັຈຈັຍຢ່າງນຶ່ງ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໗໒] ໑. ພິກສຸນີນຳກັປປິຍພັນທ໌ທີ່ເຫລືອໄປໃຊ້ເພື່ອປໂຍດຢ່າງອື່ນ

໒. ພິກສຸນີຂໍອນຸຍາຕເຈົ້າຂອງກ່ອນຈຶ່ງນຳໄປໃຊ້ເພື່ອປໂຍດຢ່າງອື່ນ

໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໖. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໑໑ ນິທານ ວັຕຖຸ**

**໑. ປັຕຕວັຄ**

**ສິກຂາບົດທີ ໑໑**

ວ່າດ້ວຍການຂໍຜ້າຫົ່ມຫນາໃນຣະດູຫນາວ

**ເຣື້ອງພິກສຸນີຖຸລລະນັນທາ**

[໗໗໖] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວທັມມີກຖາ ສມັຍນັ້ນໃນຣະດູຫນາວ ພຣະເຈົ້າປເສນທິໂກສົລຊົງຜ້າກັມພົລຣາຄາແພງເຂົ້າໄປຫາພິກສຸນີຖຸລລະນັນທາເຖິງທີ່ຢູ່ ຊົງອະພິວາທແລ້ວປະທັບນັ່ງນະທີ່ສົມຄວຣ ພິກສຸນີຖຸລລະນັນທາຊີ້ແຈງໃຫ້ພຣະເຈົ້າປເສນທິໂກສົລຜູ້ປະທັບນັ່ງ ນະທີ່ສົມຄວຣເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາຈຫານເກັ່ງກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍທັມມີກຖາ ລຳດັບນັ້ນ ພຣະເຈົ້າປເສນທິໂກສົລຜູ້ຊຶ່ງພິກສຸນີຖຸລລະນັນທາຊີ້ແຈງໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາຈຫານເກັ່ງກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍທັມມີກຖາແລ້ວ ໄດ້ຕຣັສກັບພິກສຸນີຖຸລລະນັນທາດັ່ງນີ້ວ່າ “ແມ່ເຈົ້າທ່ານຕ້ອງການສິ່ງໃດກໍໂປຣດໄດ້ບອກເຖີດ” ພິກສຸນີຖຸລລະນັນທານັ້ນທູລວ່າ “ຂໍຖວາຍພຣະພອນ ຖ້າພຣະອົງຄ໌ມີພຣະຣາຊປະສົງຄ໌ຈະພຣະຣາຊທານ ກໍຂໍໄດ້ໂປຣດພຣະຣາຊທານຜ້າກັມພົລຜືນນີ້ເຖີດ” ຄັ້ງນັ້ນ ພຣະເຈົ້າປເສນທິໂກສົລຖວາຍຜ້າກັມພົລຜືນນັ້ນແກ່ພິກສຸນີຖຸລລະນັນທາ ສເດັຈລຸກຈາກທີ່ປະທັບນັ່ງຊົງອະພິວາທພິກສຸນີຖຸລລະນັນທາແລ້ວທຳປຣະທັກສິນ(ວຽນໄປທາງຂວາ)ສເດັຈຈາກໄປ ພວກຊາວບ້ານຕຳຫນິ ປະນາມ ໂພນທະນາວ່າ “ພວກພິກສຸນີເປັນຄົນມັກມາກບໍ່ສັນໂດດ ຈັ່ງໃດຈຶ່ງອອກປາກທູລຂໍຜ້າກັມພົລຈາກພຣະຣາຊາລະ” ພິກສຸນີທັງຫລາຍໄດ້ຍິນພວກຊາວບ້ານຕຳຫນິ ປະນາມ ໂພນ ທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງອອກປາກທູລຂໍຜ້າກັມພົລຈາກພຣະຣາຊາລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບຊົງປະຊຸມສົງຂ໌ບັນຍັດສິກຂາບົທ ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາ

ອອກປາກທູລຂໍຜ້າກັມພົລຈາກພຣະຣາຊາ ແມ່ນແທ້ບໍ່” ພິກສຸທັງຫລາຍທູລຮັບວ່າ “ແມ່ນແທ້ພຣະພຸດທະເຈົ້າຂ້າ”ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລນັນທາຈຶ່ງອອກປາກທູລຂໍຜ້າກັມພົລຈາກພຣະຣາຊາລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ມິໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍກສິຂາບທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໔] ກໍພິກສຸນີເມື່ອຈະຂໍຜ້າຫົ່ມໜາວ ຄວນຂໍໄດ້ພຽງຣາຄາ ໔ ກັງສະ໑ ເປັນຢ່າງມາກ ຖ້າຂໍເກີນກວ່ານັ້ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌໔

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໗໕] ທີ່ຊື່ວ່າ ຜ້າຫົ່ມໜາວ ໄດ້ແກ່ ຜ້າຫົ່ມຊນິດນຶ່ງທີ່ໃຊ້ຫົ່ມໃນຣະດູໜາວລົມ
ຄຳວ່າ ເມື່ອຈະຂໍ ຄື ເມື່ອຈະອອກປາກຂໍ
ຄຳວ່າ ຄວນຂໍໄດ້ພຽງຣາຄາ ໔ ກັງສະ ຄື ຄວນຂໍຜ້າທີ່ມີຣາຄາ ໑໖ ກຫາປນະໄດ້
ຄຳວ່າ ຖ້າຂໍເກີນກວ່ານັ້ນ ຄວາມວ່າ ພິກສຸນີອອກປາກຂໍຜ້າຣາຄາເກີນກວ່ານັ້ນ ຕ້ອງອາບັຕິທຸກກະຕະໃນຂນະທີ່ຂໍຜ້ານັ້ນເປັນນິສສັຄຄີຍ໌ເພາະໄດ້ມາ ຄື ເປັນຂອງຈຳຕ້ອງສລະແກ່ສົງຂ໌ ແກ່ຄນະຫລືແກ່ພິກສຸນີຮູບດຽວ

ພິກສຸທັງຫລາຍ ພິກສຸນີຄວນສລະຜ້າທີ່ເປັນນິສສັຄຄີຍ໌ຢ່າງນີ້

**ໝາຍເຫດ :**

໑ ໑ ກັງສະ ເທົ່າກັບ ໔ ກຫາປນະ, ໔ ກັງສະ ຈຶ່ງເທົ່າກັບ (໔x໔) ໑໖ ກຫາປນະ (ກງີຂາ. ອ. ໖໖໔)

໔ ຫມາຍຄວາມວ່າ ພິກສຸນີຂໍຈາກຄົນອື່ນ ຕ້ອງອາບັຕິນິສສັຄຄີຍ໌ປາຈິຕຕີຍ໌ ແຕ່ຖ້າຂໍຈາກສຫທັມມິກ ຍາຕແລະຄົນປວາຣນາ ແມ່ນຈະຣາຄາເກີນ ໔ ກັງສະ ກໍບໍ່ຕ້ອງອາບັຕິ (ກງີຂາ. ອ. ໖໖໔)

໖ ຫມາຍເຖິງຜ້າຫົ່ມເນື້ອຫນາສໍາລັບຫົ່ມໃນຣະດູຫນາວ (ສືຕກາເລ ທິ ມນຸສິສາ ຖູລປາວຸຣນໍ ປາ ຣຸປນິຕີ -ປາຈິຕິຍາທີ-ໄຍຊນາ ๑๓๔/໑໕๓ ມ. )

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໖. ນິສສັຄຄິຍກັນທ໌] ໑. ປັຕຕວັຄ ສິກຂາບົດທີ ໑໑ ບົທພາຊນີຍ໌

### ວິທີສລະຜ້າຫົ່ມທີ່ເປັນນິສສັຄຄິຍ໌

**ສລະແກ່ສົງຂ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ງງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຜ້າຫົ່ມຫນາຜືນນີ້ຣາຄາເກີນ ໔ ກັງສະຂະນ້ອຍຂອມາ ເປັນນິສສັຄຄິຍ໌ ຂະນ້ອຍຂໍສລະຜ້າຫົ່ມຫນາຜືນນີ້ແກ່ສົງຂ໌" ຄັນສລະແລ້ວຄວນສະແດງ ອາບັຕິພິກສຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຜ້າຫົ່ມຫນາທີ່ທ່ານສລະໃຫ້ ດ້ວຍຍັຕຕິກັມວາຈາວ່າ "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຜ້າຫົ່ມຫນາຜືນນີ້ຂອງພິກສຸຊື່ນີ້ ເປັນນິສ ສັຄຄິຍ໌ທ່ານສລະແກ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວຄວນຄືນຜ້າຫົ່ມຫນາຜືນນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ຄນະ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ງງບ່າຂ້າງນຶ່ງ ຂາບຕີນພິກສຸນີ ຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍຯລຯ ຂະນ້ອຍຂໍສລະຜ້າຫົ່ມຫ ນາຜືນນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສລະແລ້ວຄວນສະແດງອາບັຕິ"ຯລຯ ຄວນຄືນຜ້າຫົ່ມຫນາຜືນນີ້ ໃຫ້ແກ່ພິກສຸນີຊື່ນີ້"

**ສລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ງງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຯລຯ ຂະນ້ອຍຂໍສລະຜ້າຫົ່ມຫນາຜືນນີ້ແກ່ແມ່ເຈົ້າ" ຄັນສລະແລ້ວຄວນສະ ແດງອາບັຕິ ຯລຯ "ຂະນ້ອຍຄືນຜ້າຫົ່ມຫນາຜືນນີ້ໃຫ້ແກ່ແມ່ເຈົ້າ"

### ບົທພາຊນີຍ໌

**ຕິກນິສສັຄຄິຍປາຈິຕຕີຍ໌**

[ໆໆຖ] ຜ້າທີ່ມທາມາຣາຄາເກີນ ໔ ກັງສະ ພິກສຸນີສໍາຄັນວ່າເກີນ ຂໍ ຕ້ອງອາບັຕິນິສສັຄຄິຍ
ປາຈິຕຕີຍ໌

ຜ້າທີ່ມທາມາຣາຄາເກີນ ໔ ກັງສະ ພິກສຸນີບໍ່ແນ່ໃຈ ຂໍ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ຜ້າທີ່ມທາມາຣາຄາເກີນ ໔ ກັງສະ ພິກສຸນີສໍາຄັນວ່າມີຣາຄາຫນ້ອຍກວ່າ ຂໍ ຕ້ອງອາບັຕິນິສສັຄຄິຍ
ປາຈິຕຕີຍ໌

**ທຸກທຸກກະຕະ**

ຜ້າທີ່ມທາມາຣາຄາຫນ້ອຍກວ່າ ໔ ກັງສະ ພິກສຸນີສໍາຄັນວ່າເກີນ ຕ້ອງອາບັຕິທຸກກະຕະ

ຜ້າທີ່ມທາມາຣາຄາຫນ້ອຍກວ່າ ໔ ກັງສະ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ຜ້າທີ່ມທາມາຣາຄາຫນ້ອຍກວ່າ ໔ ກັງສະ ພິກສຸນີສໍາຄັນວ່າຫນ້ອຍກວ່າ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[ໆໆໆ] ໑. ພິກສຸນີຂໍຜ້າທີ່ມທາມາຣາຄາ ໔ ກັງສະເປັນຢ່າງຫລາຍ

໒. ພິກສຸນີຂໍຜ້າທີ່ມທາມາຣາຄາຫນ້ອຍກວ່າ ໔ ກັງສະ

໓. ພິກສຸນີຂໍຈາກຍາຕ

໔. ພິກສຸນີຂໍຈາກຄົນປວາຣນາ

໕. ພິກສຸນີຂໍເພື່ອປໂຍດແກ່ຜູ້ອື່ນ

໖. ພິກສຸນີຊື້ມາດ້ວຍຊັພຍ໌ຂອງຕົນ

໗. ພິກສຸນີຈ່າຍຜ້າຣາຄາຖືກ ແຕ່ທາຍົກຜູ້ຕ້ອງກາຣໃຫ້ຈ່າຍຜ້າຣາຄາແພງ

໘. ພິກສຸນີວິກົລຈິຕ

໙. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໑໔ ນິທານ ວັຕຖຸ**

## ໑. ປັຕຕວັຄ

### ສິກຂາບົດທີ ໑໔

ວ່າດ້ວຍການຂໍຜ້າຫົ່ມບາງໃນຣະດູຮ້ອນ

### ເຣື້ອງພິກສຸນີຖຸລລະນັນທາ

[໑໑໑] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວທັມມິກຖາ ສມັຍນັ້ນໃນຣະດູຮ້ອນ ພຣະເຈົ້າປເສນທິໂກສົລຊົງຜ້າເປືອກໄມ້ຣາຄາແພງເຂົ້າໄປຫາພິກສຸນີຖຸລລະນັນທາເຖິງທີ່ຢູ່ ຊົງອະພິວາທແລ້ວປະທັບນັ່ງ ນະທີ່ສົມຄວຣ ພິກສຸນີຖຸລລນັນທາຊີ້ແຈງໃຫ້ພຣະເຈົ້າປເສນທິໂກສົລຜູ້ປະທັບນັ່ງນະທີ່ສົມຄວຣໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາຈຫານເກັ່ງກ້າປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍທັມມິກຖາ ລຳດັບນັ້ນ ພຣະເຈົ້າປເສນທິໂກສົລຜູ້ຊົ່ງພິກສຸນີຖຸລລະນັນທາຊີ້ແຈງໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາຈຫານເກັ່ງກ້າປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍທັມມິກຖາແລ້ວ ໄດ້ຕຣັສກັບພິກສຸນີຖຸລລະນັນທາດັ່ງນີ້ວ່າ “ແມ່ເຈົ້າ ທ່ານຕ້ອງການສິ່ງໃດກໍໂປຣດໄດ້ບອກເຖີດ” ພິກສຸນີຖຸລລະນັນທານັ້ນທູລວ່າ “ຂໍຖວາຍພຣະພອນ ຖ້າພຣະອົງຄ໌ມີພຣະອາຊປະສົງຄ໌ຈະພຣະຣາຊທານ ກໍຂໍໄດ້ໂປຣດພຣະຣາຊທານຜ້າເປືອກໄມ້ຜືນນີ້ເຖີດ” ຄັ້ງນັ້ນ ພຣະເຈົ້າປເສນທິໂກສົລຖວາຍຜ້າເປືອກໄມ້ຜືນນັ້ນແກ່ພິກສຸນີຖຸລລະນັນທາສເດັຈລຸກຈາກທີ່ປະທັບນັ່ງແລ້ວຊົງອະພິວາທພິກສຸນີຖຸລລະນັນທາແລ້ວ ທຳປຣະທັກສິນ(ວຽນໄປທາງຂວາ)ສເດັຈຈາກໄປພວກຊາວບ້ານ ຕຳຫນິ ປະນາມ ໂພນທະນາວ່າ “ພວກພິກສຸນີເປັນຄົນມັກມາກບໍ່ສັນໂດດ ຈັ່ງໃດຈຶ່ງອອກປາກທູລຂໍຜ້າເປືອກໄມ້ຈາກພຣະຣາຊາລະ” ພິກສຸນີທັງຫລາຍໄດ້ຍິນພວກຊາວບ້ານຕຳຫນິ ປະນາມໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດແມ່ເຈົ້າຖຸລລະນັນທາ ຈຶ່ງອອກປາກທູລຂໍຜ້າເປືອກໄມ້ຈາກພຣະຣາຊາລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ

ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາອອກປາກທູລຂໍຜ້າເປືອກໄມ້ຈາກພຣະຣາຊາ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງອອກປາກທູລຂໍຜ້າເປືອກໄມ້ຈາກພຣະຣາຊາລະ ພິກສຸທັງຫລາຍການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໘] ກໍພິກສຸນີເມື່ອຈະຂໍຜ້າຫົ່ມບາງ ຄວນຂໍໄດ້ພຽງຣາຄາ ໔ ກັງສະເຄິ່ງເປັນຢ່າງຫລາຍ ຖ້າຂໍເກີນກວ່ານັ້ນ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ເຣື່ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໑໑໐] ທີ່ຊື່ວ່າ ຜ້າຫົ່ມບາງ ໄດ້ແກ່ ຜ້າຫົ່ມຊນິດນຶ່ງທີ່ໃຊ້ໃນຣະດູຮ້ອນ໑

ຄຳວ່າ ເມື່ອຈະຂໍ ຄື ເມື່ອຈະອອກປາກຂໍ

ຄຳວ່າ ຄວນຂໍໄດ້ພຽງຣາຄາ ໔ ກັງສະເຄິ່ງເປັນຢ່າງຫລາຍ ຄື ຄວນຂໍຜ້າມີຣາຄາ ໑໐ ກຫາປນະໄດ້

**ໝາຍເຫດ :**

໑ ຫມາຍເຖິງຜ້າຫົ່ມເນື້ອບາງສຳລັບຫົ່ມໃນຣະດູຮ້ອນ (ອຸນຫກາເລ ທີ ມນຸສິສາ ສຸຂຸມປາວຸຣນໍ ປາຣຸປນຕິ -ປາຈິຕິຍາທິ-ໂຍຊນາ ໑໑໘/໑໕໑ ມ. )

ຄຳວ່າ ຖ້າຂໍເກີນກວ່ານັ້ນ ຄວາມວ່າ ພິກສຸນີອອກປາກຂໍຜ້າຣາຄາເກີນກວ່ານັ້ນ ຕ້ອງອາບັຕິທຸກກະຕະໃນຂນະທີ່ຂໍ ຜ້ານັ້ນເປັນນິສສັຄຄິຍ໌ເພາະໄດ້ມາ ຄືເປັນຂອງຈຳຕ້ອງສລະແກ່ສົງຄ໌ ແກ່ຄນະຫລືແກ່ພິກສຸນີຮູບດຽວ ພິກສຸທັງຫລາຍ ພິກສຸນີຄວນສລະຜ້າຫົ່ມບາງທີ່ເປັນນິສສັຄຄິຍ໌ຢ່າງນີ້

**ວິທີສລະຜ້າຫົ່ມທີ່ເປັນນິສສັຄຄິຍ໌**

**ສູລະແກ່ສົງຂ໌**

ພິກສຸນີຮູບນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຜ້າຫົ່ມບາງຜືນນີ້ຣາຄາເກີນ ໔ ກັງສະເຄິ່ງ ຂະນ້ອຍຂໍມາ ເປັນນິສສັຄຄິຍ໌ ຂະນ້ອຍຂໍສູລະຜ້າຫົ່ມບາງຜືນນີ້ແກ່ສົງຂ໌" ຄັນສູລະແລ້ວຄວນສະແດງອາບັຕິ ພິກສຸນີຜູ້ສລາດສາມາດຄວນຮັບອາບັຕິ ຄວນຄືນຜ້າຫົ່ມບາງທີ່ທ່ານສູລະໃຫ້ດ້ວຍຍັຕຕິກັມວາຈາ ວ່າ "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຜ້າຫົ່ມບາງຜືນນີ້ຂອງພິກສຸນີຊື່ນີ້ເປັນນິສສັຄຄິຍ໌ທ່ານສູລະແກ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວຄວນຄືນຜ້າຫົ່ມບາງຜືນນີ້ໃຫ້ແກ່ພິກສຸນີຊື່ນີ້"

ສູລະແກ່ຄນະພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຫລາຍຮູບ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງຂາບຕີນພິກສຸນີຜູ້ແກ່ພັນສາ ນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າທັງຫລາຍ ฯລฯ ຂະນ້ອຍຂໍສູລະຜ້າຫົ່ມບາງຜືນນີ້ແກ່ແມ່ເຈົ້າທັງຫລາຍ" ຄັນສູລະແລ້ວຄວນສະແດງອາບັຕິ "ฯລฯ ຄວນຄືນຜ້າຫົ່ມບາງຜືນນີ້ໃຫ້ແກ່ພິກສຸນີຊື່ນີ້"

**ສູລະແກ່ບຸຄຄົລ**

ພິກສຸນີຮູບນັ້ນຄວນເຂົ້າໄປຫາພິກສຸນີຮູບນຶ່ງ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ฯລฯ ຂະນ້ອຍຂໍສູລະຜ້າຫົ່ມບາງຜືນນີ້ແກ່ແມ່ເຈົ້າ" ຄັນສູລະແລ້ວຄວນສະແດງອາບັຕິ ฯລฯ "ຂະນ້ອຍຄືນຜ້າຫົ່ມບາງຜືນນີ້ໃຫ້ແກ່ແມ່ເຈົ້າ"

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ໑. ປັຕຕວັຄ ສິກຂາບົດທີ ໑໔ ອນາປັຕຕິວາຣ

**ບົທພາຊນີຍ໌**

**ຕິກນິສສັຄຄິຍປາຈິຕຕີຍ໌**

[ກຸລ໑] ຜ້າຫົ່ມບາງຣາຄາເກີນ ໔ ກັງສະເຄິ່ງ ພິກສຸນີສຳຄັນວ່າເກີນ ຂໍ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ຜ້າຫົ່ມບາງຣາຄາເກີນ ໔ ກັງສະເຄິ່ງ ພິກສຸນີບໍ່ແນ່ໃຈ ຂໍ ຕ້ອງອາບັຕິນິສສັຄຄິຍປາຈິຕຕີຍ໌

ຜ້າຫົ່ມບາງຣາຄາເກີນ ໔ ກັງສະເຄິ່ງ ພິກສຸນີສຳຄັນວ່າໜ້ອຍກວ່າ ຂໍ ຕ້ອງອາບັຕິນິສັສັຄຄິຍປາຈິຕຕິຍ໌

**ທຸກກຸກກະຕະ**

ຜ້າຫົ່ມບາງຣາຄາໜ້ອຍກວ່າ ໔ ກັງສະເຄິ່ງ ພິກສຸນີສຳຄັນວ່າເກີນ ຕ້ອງອາບັຕິທຸກກະຕະ
ຜ້າຫົ່ມບາງຣາຄາໜ້ອຍກວ່າ ໔ ກັງສະເຄິ່ງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ຜ້າຫົ່ມບາງຣາຄາໜ້ອຍກວ່າ ໔ ກັງສະເຄິ່ງ ພິກສຸນີສຳຄັນວ່າໜ້ອຍກວ່າ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[ກຸລ໔] ໑. ພິກສຸນີຂໍຜ້າຫົ່ມບາງຣາຄາ ໔ ກັງສະເຄິ່ງເປັນຢ່າງຫລາຍ
໔. ພິກສຸນີຂໍຜ້າຫົ່ມບາງຣາຄາໜ້ອຍກວ່າ ໔ ກັງສະເຄິ່ງ
໓. ພິກສຸນີຂໍຈາກຍາຕ
໔. ພິກສຸນີຂໍຈາກຄົນປວາຣນາ
໕. ພິກສຸນີຂໍເພື່ອປໂຍດແກ່ຜູ້ອື່ນ
໖. ພິກສຸນີຊື້ມາດ້ວຍຊັພຍ໌ຂອງຕົນ
໗. ພິກສຸນີຈ່າຍຜ້າຣາຄາຖືກຕໍ່ຫາຍິກຜູ້ຕ້ອງການໃຫ້ຈ່າຍຜ້າຣາຄາແພງ
໘. ພິກສຸນີວິກົລຈິຕ
໙. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໓. ນິສສັຄຄິຍກັນຫ໌] ບົທສຣຸປ**

**ບົທສຣຸບ**

ແມ່ເຈົ້າທັງຫລາຍ ຫຼັມຄືນິສສັຄຄິຍປາຈິຕຕິຍ໌ ໓໐ ສິກຂາບົທ໑ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫລາຍໃນຫຼັມຄືນິສສັຄຄິຍປາຈິຕຕິຍ໌ ໓໐ ສິກຂາບົທເຫລົ່ານັ້ນວ່າ "ແມ່ເຈົ້າທັງຫລາຍບໍຣິສຸດຫຼໍແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໔ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດຫຼໍ

ແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດຫຼໍແລ້ວຫລື" ແມ່ເຈົ້າທັງຫລາຍບໍຣິສຸດຫຼໍແລ້ວໃນຫຼັມຄືນິສສັຄຄີຍປາຈິຕຕີຍ໌ ໓໐ ສິກຂາບົທ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

ນິສສັຄຄີຍກັນຫ໌ໃນພິກຂຸນີວິພັງຄ໌ ຈົບ

**ໝາຍເຫດ :**

໑ ນິສສັຄຄີຍປາຈິຕຕີຍ໌ຂອງພິກສຸນີມີ ໓໐ ສິກຂາບົທ ໃນພິກຂຸນີວິພັງຄ໌ນີ້ສະແດງສະເພາະອສາທາຣນສິກຂາບົທ ຄື ພິກສຸສົງຂ໌ບໍ່ຕ້ອງຮັກສາພຽງ ໑໒ ສິກຂາບົທ ທີ່ເຫລືອ ໑໘ ສິກຂາບົທ ຄື

໑. ປຖມກຖິນສິກຂາບົດທີ ໑ ບ່ອນຈີວອນວັຄຂອງພິກສຸສົງຂ໌

໒. ອຸທໄທສິຕສິກຂາບົດທີ ໒ ບ່ອນຈີວອນວັຄຂອງພິກສຸສົງຂ໌

໓. ຕຕິຍກຖິນສິກຂາບົດທີ ໓ ບ່ອນຈີວອນວັຄຂອງພິກສຸສົງຂ໌

໔. ອັຢຢາຕກວິຢຢັຕິສິກຂາບົດທີ ໖ ບ່ອນຈີວອນວັຄຂອງພິກສຸສົງຂ໌

໕. ຕຕຸຕຕຣິສິກຂາບົດທີ ໗ ບ່ອນຈີວອນວັຄຂອງພິກສຸສົງຂ໌

໖. ອຸປັກຂຕສິກຂາບົດທີ ໘ ບ່ອນຈີວອນວັຄຂອງພິກສຸສົງຂ໌

໗. ທຸຕິຍອຸປັກຂຕສິກຂາບົດທີ ໙ ບ່ອນຈີວອນວັຄຂອງພິກສຸສົງຂ໌

໘. ຣາຊສິກຂາບົດທີ ໑໐ ບ່ອນຈີວອນວັຄຂອງພິກສຸສົງຂ໌

໙. ຣູປິຍສິກຂາບົດທີ ໘ ບ່ອນໂກສີຍວັຄຂອງພິກສຸສົງຂ໌

໑໐. ຣູປິຍສັງໂວຫາຣສິກຂາບົດທີ ໙ ບ່ອນໂກສີຍວັຄຂອງພິກສຸສົງຂ໌

໑໑. ກຍວິກກຍສິກຂາບົດທີ ໑໐ ບ່ອນໂກສີຍວັຄຂອງພິກສຸສົງຂ໌

໑໒. ອູນປັຢຈພັນທູນສິກຂາບົດທີ ໒ ບ່ອນປັຕຕວັຄຂອງພິກສຸສົງຂ໌

໑໓. ເພສັຊຊສິກຂາບົດທີ ໓ ບ່ອນປັຕຕວັຄຂອງພິກສຸສົງຂ໌

໑໔. ຈີວອນອັຈສີທນສິກຂາບົດທີ ໕ ບ່ອນປັຕຕວັຄຂອງພິກສຸສົງຂ໌

໑໕. ສຸຕຕວິຢຍັຕຕິສິກຂາບົດທີ ໖ ບ່ອນປັຕຕວັຄຂອງພິກສຸສົງຂ໌

໑໖. ມຫາເປສກາຣສິກຂາບົດທີ ໗ ບ່ອນປັຕຕວັຄຂອງພິກສຸສົງຂ໌

໑໗. ອັຈເຈກຈີວອນສິກຂາບົດທີ ໘ ບ່ອນປັຕຕວັຄຂອງພິກສຸສົງຂ໌

໑໘. ປຣິນຕສິກຂາບົດທີ ໑໐ ບ່ອນປັຕຕວັຄຂອງພິກສຸສົງຂ໌

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນ຺ຫ໌] ໑. ລສຸນ຺ວັຄ ສິກຂາບົດທີ ໑ ນິທານວັຕຖຸ ໔. ປາຈິຕຕິຍກັນ຺ຫ໌

ແມ່ເຈົ້າທັງຫລາຍ ຫົ້ມຄືປາຈິຕຕິຍ໌ ໑໖໖ ສິກຂາບົທເຫລົ່ານີ້ມາເຖິງອາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ໆຕາມລຳດັບ

### ໑. ລສຸນ຺ວັຄ

ໝວດວ່າດ້ວຍກະທຽມ

### ສິກຂາບົດທີ ໑

ວ່າດ້ວຍການຂໍກະທຽມ

### ເຣື່ອງພິກສຸນີຖຸລລະນັນທາ

[໗໙໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ອຸບາສິກຄົນນຶ່ງປວາຣນາດ້ວຍກະທຽມກັບພິກສຸນີສົງຂ໌ໄວ້ວ່າ "ຜູ້ຂ້າຂໍປວາຣນາແມ່ເຈົ້າທັງຫລາຍທີ່ຕ້ອງການກະທຽມ ດ້ວຍກະທຽມ" ແລະສັ່ງຄົນເຝົ້າໄຮ່ວ່າ "ຖ້າພິກສຸນີທັງຫລາຍມາກໍຈົ່ງຖວາຍທ່ານໄປຮູປລະ ໒-໓ ກຳ" ຄັ້ງນັ້ນມີມຫໍຣສົພໃນກຸງສາວັດຖີ ກະທຽມທີ່ເຂົານຳມາເກັບໄວ້ໄດ້ຫມົດລົງ ພິກສຸນີທັງຫລາຍເຂົ້າໄປຫາອຸບາສິກນັ້ນໄດ້ກ່າວດັ່ງນີ້ວ່າ "ພວກເຮົາຕ້ອງການກະທຽມ" ອຸບາສິກນັ້ນກ່າວວ່າ "ແມ່ເຈົ້າທັງຫລາຍ ກະທຽມບໍ່ມີ ກະທຽມທີ່ເຂົານຳມາເກັບໄວ້ຫມົດແລ້ວ ທ່ານທັງຫລາຍໂປຣດໄປທີ່ໄຮ່" ພິກສຸນີຖຸລລະນັນທາໄປທີ່ໄຮ່ແລ້ວໃຫ້ນຳກະທຽມໄປເປັນຈຳນວນຫລາຍໂດຍບໍ່ຮູ້ຈັກປະມານ ຄົນເຝົ້າໄຮ່ຈຶ່ງຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໄປທີ່ໄຮ່ແລ້ວໃຫ້ນຳກະທຽມໄປເປັນຈຳນວນຫລາຍ ໂດຍບໍ່ຮູ້ຈັກປະມານລະ" ພິກສຸນີທັງຫລາຍໄດ້ຍິນຄົນເຝົ້າໄຮ່ຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງໃຫ້ນຳກະທຽມໄປເປັນຈຳນວນຫລາຍໂດຍບໍ່ຮູ້ຈັກປະມານລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ

ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາໃຫ້ນຳກະທຽມໄປເປັນຈຳນວນຫລາຍໂດຍບໍ່ຮູ້ຈັກປະມານ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ"ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍຈັ່ງໃດພິກສຸນີຖຸລລະນັນທາຈຶ່ງໃຫ້ນຳກະທຽມໄປເປັນຈຳນວນຫລາຍ ໂດຍບໍ່ຮູ້ຈັກປະມານລະພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ່ໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ທີ່ຈິງກັບຈະເຮັດໃຫ້ຄົນທີ່ບໍ່ເຫລື້ອມໃສກໍບໍ່ເຫລື້ອມໃສໄປເລີຍ ຄົນທີ່ເຫລື້ອມໃສຢູ່ແລ້ວບາງພວກກໍຈະກາຍເປັນອື່ນໄປ" ຄັນຊົງຕຳຫນິພິກສຸນີຖຸລລະນັນທາໂດຍປະກາຣຕ່າງໆແລ້ວ ຊົງສະແດງທັມມີກຖາແກ່ພິກສຸທັງຫລາຍໃຫ້ເຫມາະສົມໃຫ້ຄ້ອຍຕາມກັບເຣື້ອງນັ້ນ ຮັບສັ່ງກັບພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ເຣື້ອງເຄີຍມີມາແລ້ວ ພິກສຸນີຖຸລລະນັນທາເຄີຍເປັນພັຣຍາຂອງພຣາມນ໌ຄົນນຶ່ງ ມີທິດາ ໓ ຄົນ ຊື່ນັນທາ ນັນທະວະດີ ສຸນທຣີນັນທາ ພິກສຸທັງຫລາຍ ຕໍ່ມາພຣາມນ໌ນັ້ນຕາຍໄປເກີດເປັນຫົງສ໌ຕົວນຶ່ງ ມີຂົນເປັນທອງຄຳລ້ວນ ຫົງສ໌ນັ້ນມາສລັດຂົນທອງ ຄຳ ໃຫ້ແກ່ທິດາເຫລົ່ານັ້ນຄົນລະຂົນ ຕໍ່ມາພິກສຸນີຖຸລລະນັນທາຄິດວ່າ "ຫົງສ໌ຕົວນີ້ສລັດຂົນໃຫ້ ພວກເຮົາຄົນລະຂົນເທົ່ານັ້ນ" ຈຶ່ງຈັບພະຍາຫົງສ໌ຫລັກຂົນຈົນຫມົດ ແຕ່ຂົນທີ່ງອກຂຶ້ນໃຫມ່ກາຍເປັນສີຂາວ ໃນຄັ້ງນັ້ນ ພິກສຸນີຖຸລລະນັນທາເສື່ອມຈາກທອງຄຳເພາະຄວາມໂລພເກີນໄປ ບັດນີ້ກໍເສື່ອມຈາກກະທຽມ ໄດ້ສິ່ງໃດ ຄວຣພໍໃຈສິ່ງນັ້ນ ຄວາມໂລພເກີນໄປເປັນຄວາມຊົ່ວຮ້າຍ (ເຫມືອນ)ຖຸລລະນັນທາຈັບພຍາຫົງສ໌ແລ້ວເສື່ອມຈາກທອງຄຳ"໑

**ໝາຍເຫດ :**

໑ ຂຸ. ຊາ. ໒໗/໑໓໖/໓໔

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ໑ ບົທພຍາຊນີຍ໌**

ເທື່ອນັ້ນ ພຣະຜູ້ມີພຣະພາກຊົງຕຳຫນິພິກສຸນີຖຸລລະນັນທາໂດຍປະກາຣຕ່າງໆແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗ລ໔] ກໍພິກຂຸນີໃດສັນກະທຽມ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກຂຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗ລ໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ກະທຽມ ພຣະຜູ້ມີພຣະພາກຕຣັສໝາຍເຖິງ ກະທຽມຊື່ມາຄທິກະ[໑]

ພິກຂຸນີຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັຕິທຸກກະຕະ ສັນ ຕ້ອງອາບັຕິປາຈິຕຕີຍ໌ທຸກໆຄຳກືນ

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗ລ໖] ກະທຽມ ພິກຂຸນີສຳຄັນວ່າເປັນກະທຽມ ສັນ ຕ້ອງອາບັຕິປາຈິຕຕີຍ໌ ກະທຽມ ພິກຂຸນີບໍ່ແນ່ໃຈ ສັນ ຕ້ອງອາບັຕິປາຈິຕຕີຍ໌ ກະທຽມ ພິກຂຸນີສຳຄັນວ່າບໍ່ແມ່ນກະທຽມ ສັນ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ຄຳວ່າ "ມາຄທິກະ" ເປັນຊື່ສະເພາະຂອງກະທຽມພັນນີ້ ເພາະເກີດໃນແຄວ້ນມຄທ ກະທຽມຊນິດນີ້ ນຶ່ງຕົ້ນຈະມີຫລາຍຫົວຕິດກັນເປັນພວງ ບໍ່ແມ່ນຫົວດຽວ (ວິ. ອ. ໔/໗ລ໕/໔໗໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໑. ລສຸນວັຄ ສິກຂາບົດທີ ໑ ອນາປັຕຕິວາຣ**

**ທຸກທຸກກະຕະ**

ບໍ່ແມ່ນກະທຽມ ພິກຂຸນີສຳຄັນວ່າເປັນກະທຽມ ສັນ ຕ້ອງອາບັຕິທຸກກະຕະ

ບໍ່ແມ່ນກະທຽມ ພິກສຸນີບໍ່ແນ່ໃຈ ສັນ ຕ້ອງອາບັຕິທຸກກະຕະ
ບໍ່ແມ່ນກະທຽມ ພິກສຸນີສໍາຄັນວ່າບໍ່ແມ່ນກະທຽມ ສັນ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗ລ໗] ໑. ພິກສຸນີສັນກະທຽມເຫລືອງ໑

໒. ພິກສຸນີສັນກະທຽມແດງ

໓. ພິກສຸນີສັນກະທຽມຂຽວ

໔. ພິກສຸນີສັນກະທຽມຕົ້ນດຽວ

໕. ພິກສຸນີສັນກະທຽມປຸງໃນແກງ

໖. ພິກສຸນີສັນກະທຽມປຸງໃນຊີ້ນ

໗. ພິກສຸນີສັນກະທຽມຈືນນໍ້າມັນ

໘. ພິກສຸນີສັນກະທຽມປຸງໃນຍໍາຜັກສົດ

໙. ພິກສຸນີສັນກະທຽມປຸງໃນແກງອ່ອມ

໑໐. ພິກສຸນີວິກົລຈິຕ

໑໑. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

**ໝາຍເຫດ :**

໑ ກະທຽມຊະນິດອື່ນໆມີລັກສະນະຕ່າງຈາກກະທຽມມາຄທິກະ ສະເພາະສີແລະເຍື່ອເທົ່ານັ້ນ (ວິ. ອ. ໒/໗ລ໗/໔໘໘) ແຕ່ພຣະວິນັຍປິດົກ ແປແລະຮຽບຮຽງຈາກ ສະບັບ “PALI TEXT SOCIETY ກ່າວວ່າ ຄໍາວ່າ “ກະທຽມເຫລືອງ” ຫມາຍເຖິງຫົວຫອມ “ກະທຽມແດງ” ຫມາຍເຖິງຫົວຜັກກາດ “ກະທຽມຂຽວ” ຫມາຍເຖິງສົມໍເຫລືອງ (ດູ The Book of the Discipline Vol. III, PP ໒໔໕, PTS. )

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໑. ລສຸນວັຄ ສິກຂາບົດທີ ໔ ນິທານວັຕຖຸ ໑. ລສຸນວັຄ

### ສິກຂາບົດທີ ໔

ວ່າດ້ວຍການຫລົກຂົນໃນທີ່ແຄບ

### ເຣື້ອງພິກສຸນີສັພພັຄຄີຍ໌

[໗ລ໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ໃຫ້ຫລົກຂົນໃນທີ່ແຄບ ເປືອຍກາຍອາບນ້ຳທ່າດຽວກັນກັບພວກຍິງແພສຍາ ໃນແມ່ນ້ຳອຈິຣວດີ ພວກຍິງແພສຍາຕຳໜິ ປະນາມໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຫ້ຫລົກຂົນໃນທີ່ແຄບເໝືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄການລະ" ພິກສຸນີທັງຫລາຍໄດ້ຍິນພວກຍິງແພສຍາຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໃຫ້ຫລົກຂົນໃນທີ່ແຄບລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ໃຫ້ຫລົກຂົນໃນທີ່ແຄບ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໃຫ້ຫລົກຂົນໃນທີ່ແຄບລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກ ສິກຂາບົທນີ້ຂຶ້ນສະແດງ ດັ່ງນີ້

### ພຣະບັນຍັດ

[໗ລລ] ກໍພິກສຸນີໃດໃຫ້ຫລົກຂົນໃນທີ່ແຄບ ຕ້ອງອາບັຕິປາຈິຕຕິຍ໌

ເຣື້ອງພິກສຸນີສັພພັຄຄີຍ໌ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ໔ ອນາປັຕຕິວາຣ

**ສິກຂາບົທວິພັງຄ໌**

[໗໐໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ທີ່ແຄບ ຄື ຮັກແຮ້ທັງ ໔ ຂ້າງ ບໍຣິເວນອົງຄ໌ກຳເນີດ
ຄຳວ່າ ໃຫ້ຖອນ ຄື ໃຫ້ຫລົກຂົນ ແມ່ນເສັ້ນດຽວ ຕ້ອງອາບັຕິປາຈິຕຕີຍ໌ ໃຫ້ຫລົກຂົນຫລາຍເສັ້ນ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໐໑] ໑. ພິກສຸນີຫລົກຂົນເພາະອາພາທເປັນເຫຕຸ[1]

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ໝາຍເຫດ :**

໑ ຄືເພາະເປັນຫິດ ເພາະຄັນ (ວິ. ອ. ໔/໗໐໑/໔໗໙)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ໕ ນິທານວັຕຖຸ

## ໑. ລສຸນວັຄ

**ສິກຂາບົດທີ ໕**

ວ່າດ້ວຍການສັມຜັສອົງຄ໌ກຳເນີດ

## ເຣື້ອງພິກສຸນີ ໔ ຮູບ

[ກ໑໐໔] ສູມັຍນັ້ນ ພຣະຜູ້ມີພຣະພູາກພຸດທູະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນ ທິກເສູດຖີ ເຂຕກຸງສູາວັຕຖີ ຄັ້ງນັ້ນ ພິກສຸນີ ໔ ຮູບຖືກຄວາມບໍ່ຍິນດີບີບຄັ້ນ ຈຶ່ງເຂົ້າໄປສູ່ຫ້ອງ ຊັ້ນໃນແລ້ວໃຊ້ຝ່າມືຕົບອົງຄ໌ກຳເນີດກັນ ພິກສຸນີທັງຫລາຍພາກັນແລ່ນເຂົ້າໄປຕາມສຽງນັ້ນແລ້ວ ໄດ້ກ່າວກັບພິກສຸນີທັງ ໔ ຮູບນັ້ນດັ່ງນີ້ວ່າ “ແມ່ເຈົ້າ ເປັນຫຍັງພວກທ່ານຈຶ່ງທຳມິດີມີຮ້າຍກັບຊາຍ ລະ໑ ພິກສຸນີທັງສອງຕອບວ່າ “ພວກຂະນ້ອຍບໍ່ໄດ້ທຳມິດີມີຮ້າຍກັບຊາຍ” ແລ້ວເລົ່າເຣື້ອງນັ້ນໃຫ້ ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ฯລฯ ພາກັນຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງ ໃດພິກສຸນີທັງຫລາຍຈຶ່ງໃຊ້ມືຕົບອົງຄ໌ກຳເນີດກັນລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພູາກໃຫ້ຊົ ງຊາບ

## ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພູາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພິກສຸນີທັງຫລາຍໃຊ້ຝ່າມືຕົບອົງຄ໌ກຳເນີດກັນ ແມ່ນ ແທ້ບໍ” ພິກສຸທັງຫລາຍທູລຮັບວ່າ “ແມ່ນແທ້ພຣະພຸດທູະເຈົ້າຂ້າ” ພຣະຜູ້ມີພຣະພູາກພຸດທູະ ເຈົ້າຊົງຕຳຫນິວ່າ “ฯລฯ ພິກສຸທັງຫລາຍ ຈັ່ງໃດພິກສຸນີທັງຫລາຍຈຶ່ງໃຊ້ຝ່າມືຕົບອົງຄ໌ກຳເນີດກັນ ລະ ພິກສຸທັງຫລາຍ ກາຣເຮັດຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ

**ໝາຍເຫດ :**

໑ ຫມາຍເຖິງມີຄວາມສັມພັນທ໌ກັນໃນທາງຊູ້ສາວ

ໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນ ฯລฯ” ແລ້ວຈຶ່ງ ຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[ກ໑໐໕] ພິກສຸນີຕ້ອງອາບັຕິປາຈິຕຕີຍ໌ ເພາະໃຊ້ຝ່າມືຕົບອົງຄ໌ກຳເນີດ

ເຣື້ອງພິກສຸນີ ໔ ຮູບ ຈົບ

**ສິກຂາບົທວິພັງຄ໌**

[໗໐໔] ທີ່ຊື່ວ່າ ໃຊ້ຝ່າມືຕົບອົງຄ໌ກຳເນີດ ຄື ພິກຂຸນີຍິນດີການສັມຜັສ ໂດຍທີ່ສຸດໃຊ້ກາບບົວຕີທີ່ອົງຄ໌ກຳເນີດ ຕ້ອງອາບັຕິປາຈິຕຕິຍ໌

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໐໕] ໑. ພິກຂຸນີສັມຜັສເພາະອາພາທເປັນເຫຕຸ໑

໔. ພິກຂຸນີວິກົລຈິຕ

໕. ພິກຂຸນີຕົ້ນບັນຍັດ

**ສິກຂາບົດທີ ໓ ຈົບ**

**ໝາຍເຫດ :**

໑ ຄືຈະບົບຝີຫລືແຜ (ວິ. ອ. ໔/໗໐໕/໔໙໐)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໑. ລສຸນວັຄ ສິກຂາບົດທີ ໔ ນິທານວັຕຖຸ**
**໑. ລສຸນວັຄ**

**ສິກຂາບົດທີ ໔**

ວ່າດ້ວຍການໃຊ້ທ່ອນຍາງ

**ເຣື່ອງພິກຂຸນີຮູບນຶ່ງ**

[໗໐໖] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ອດີຕນາງສນົມຂອງພຣະຣາຊາໄປບວດຢູ່ໃນສຳນັກພິກຂຸນີ ພິກຂຸນີຮູບນຶ່ງຖືກຄວາມບໍ່ຍິນດີຍິ່ງບີບຄັ້ນ ຈຶ່ງເຂົ້າໄປຫາພິກຂຸນີ(ຜູ້ເຄີຍເປັນນາງສນົມ)ນັ້ນເຖິງທີ່ຢູ່ຄັນເຖິງແລ້ວ ໄດ້ກ່າວກັບພິກຂຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າພຣະຣາຊາສເດັຈໄປຫາທ່ານດົນໆຄັ້ງ ທ່ານທົນຢູ່ໄດ້ຢ່າງໃດ" ພິກຂຸນີນັ້ນຕອບວ່າ "ແມ່ເຈົ້າ ຂະນ້ອຍໃຊ້ທ່ອນຍາງ" ພິກຂຸນີນັ້ນຖາມວ່າ "ແມ່ເຈົ້າ ທ່ອນຍາງນີ້ເປັນຢ່າງໃດ" ລຳດັບນັ້ນ ພິກຂຸນີຜູ້ເຄີຍເປັນນາງສນົມບອກທ່ອນຍາງແກ່ພິກຂຸນີ

ນັ້ນ ຕໍ່ມາພິກສຸນີນັ້ນໃຊ້ທ່ອນຍາງແລ້ວລືມລ້າງວາງຖິ້ມໄວ້ໃນທີ່ແຫ່ງນຶ່ງ ພິກສຸນີທັງຫລາຍເຫັນທ່ອນຍາງມີແມງວັນຕອມຈຶ່ງຖາມວ່າ "ນີ້ເປັນກາຣກະທຳຂອງໃຜ" ພິກສຸນີນັ້ນກ່າວຢ່າງນີ້ວ່າ "ນີ້ເປັນກາຣກະທຳຂອງຂະນ້ອຍເອງ "ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນ ທະນາວ່າ "ຈັ່ງໃດພິກສຸນີຈຶ່ງໃຊ້ທ່ອນຍາງລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງ ຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີໃຊ້ທ່ອນຍາງ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໑. ລສຸນວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

ວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງໃຊ້ທ່ອນຍາງລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໐໗] ພິກສຸນີຕ້ອງອາບັຕິປາຈິຕຕີຍ໌ ເພາະໃຊ້ທ່ອນຍາງ

ເຣື້ອງພິກສຸນີຮູບນຶ່ງ ຈົບ

**ສິກຂາບົທວິພັງຄ໌**

[໗໐໗] ທີ່ຊື່ວ່າ ທ່ອນຍາງ ໄດ້ແກ່ ສິ່ງທີ່ເຮັດດ້ວຍຍາງ ທ່ອນຍາງທີ່ເຮັດດ້ວຍໄມ້ ທ່ອນຍາງທີ່ເຮັດດ້ວຍແປ້ງ ທ່ອນຍາງທີ່ເຮັດດ້ວຍດິນ ພິກສຸນີຍິນດີກາຣສັມຜັສໂດຍທີ່ສຸດແມ່ນສອດກີບອຸບົລເຂົ້າອົງຄ໌ກຳເນີດ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໐໙] ໑. ພິກສຸນີໃຊ້ທ່ອນຍາງເພາະອາພາຫຼເປັນເຫຕຸ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ໕ ນິທານວັຕຖຸ**
**໑. ລສຸນວັຄ**

**ສິກຂາບົດທີ ໕**

ວ່າດ້ວຍການໃຊ້ນ້ຳຊຳຣະ

**ເຣື້ອງພຣະນາງມຫາປຊາບໍດີໂຄຕມີ**

[໗໑໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ນິໂຄຣທາຣາມ ເຂຕກຸງກບິລພັສດຸ໌ ແຄວ້ນສັກກະ ຄັ້ງນັ້ນ ພຣະນາງມຫາປຊາບໍດີໂຄຕມີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຖິງທີ່ປະທັບ ຄັນເຖິງແລ້ວ ຖວາຍອະພິວາທແລ້ວຢືນໃນທີ່ໃຕ້ລົມ ຂາບທູລວ່າ“ຂ້າແຕ່ພຣະຜູ້ມີພຣະພາກ ມາຕຸຄາມກິ່ນບໍ່ດີ” ຄັ້ງນັ້ນ ພຣະຜູ້ມີພຣະພາກຕຣັສວ່າ “ພິກສຸນີທັງຫລາຍຈິ່ງໃຊ້ນ້ຳຊຳຣະທຳຄວາມສະອາດ” ຊົງຊີ້ແຈງໃຫ້ພຣະນາງມຫາປຊາບໍດີໂຄຕມີເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດປຸກໃຈໃຫ້ອາຈຫານເກັ່ງກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍທັມມີກຖາ ລຳດັບນັ້ນ ພຣະນາງມຫາປຊາບໍດີໂຄຕມີຜູ້ຊຶ່ງພຣະຜູ້ມີພຣະພາກຊີ້ແຈງໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບເອົາໄປປະຕິບັດປຸກໃຈໃຫ້ອາຈຫານເກັ່ງກ້າ ປອບປະໂລມໃຈໃຫ້ສົດຊື່ນເບີກບານດ້ວຍທັມມີກຖາແລ້ວ ຖວາຍອະພິວາທພຣະຜູ້ມີພຣະພາກ ກະທຳປຣະທັກສິນ(ວຽນໄປທາງຂວາ)ແລ້ວຈາກໄປພຣະຜູ້ມີພຣະພາກຊົງສະແດງທັມມີກຖາເພາະເຣື່ອງນີ້ເປັນຕົ້ນເຫຕຸ ຮັບສັ່ງກັບພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ເຮົາອນຸຍາຕໃຫ້ພິກສຸນີໃຊ້ນ້ຳຊຳຣະທຳຄວາມສະອາດໄດ້”

ເຣື້ອງພຣະນາງມຫາປຊາບໍດີໂຄຕມີ ຈົບ

## ເຣື້ອງພິກສຸນີຮູບນຶ່ງ

ສະໄໝນັ້ນ ພິກສຸນີຮູບນຶ່ງຊາບວ່າ "ພຣະຜູ້ມີພຣະພາກຊົງອະນຸຍາດນ້ຳຊຳຣະທຳຄວາມສະອາດ" ຈຶ່ງໃຊ້ນ້ຳຊຳຣະທຳຄວາມສະອາດເລີກເກີນໄປ ເຮັດໃຫ້ເກີດແຜຂຶ້ນທີ່ອົງຄ໌ກຳເນີດຄັ້ງນັ້ນ ທ່ານບອກເຣື້ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີໃຊ້ນ້ຳຊຳຣະທຳຄວາມສະອາດເລີກເກີນໄປລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຄ໌ບັນຍັດສິກຂາບົດ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນັ້ນເປັນຕົ້ນເຫດຸຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີໃຊ້ນ້ຳຊຳຣະທຳຄວາມສະອາດເລີກເກີນໄປ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງໃຊ້ນ້ຳຊຳຣະທຳຄວາມສະອາດເລີກເກີນໄປລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໗໑໑] ກໍພິກສຸນີຜູ້ຈະໃຊ້ນ້ຳຊຳຣະທຳຄວາມສະອາດ ຄວນໃຊ້ນ້ຳຊຳຣະທຳຄວາມສະອາດເລີກພຽງ ໔ ຂໍ້ອົງຄຸລີເປັນຢ່າງຫລາຍ ໃຫ້ເກີນກຳໜົດນັ້ນ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຮູບນຶ່ງ ຈົບ

## ສິກຂາບົດວິພັງຄ໌

[໗໑໔] ທີ່ຊື່ວ່າ ນ້ຳຊຳຣະທຳຄວາມສະອາດ ພຣະຜູ້ມີພຣະພາກຕຣັສໝາຍເຖິງນ້ຳຊຳຣະບໍຣິເວນອົງຄ໌ກຳເນີດ

ຄຳວ່າ ຜູ້ຈະໃຊ້ ຄື ຜູ້ຊະລ້າງ

ຄຳວ່າ ຄວນໃຊ້ນ້ຳຊຳຣະທຳຄວາມສະອາດເລີກພຽງ ໔ ຂໍ້ອົງຄຸລີເປັນຢ່າງຫລາຍຄືໃຊ້ນ້ຳຊຳຣະນິກພຽງ ໔ ຂໍ້ໃນ ໔ ອົງຄຸລີເປັນຢ່າງຫລາຍ

ຄຳວ່າ ໃຫ້ເກີນກຳຫນົດນັ້ນ ຄວາມວ່າ ພິກສຸນີຍິນດີກາຣສັມຜັສໃຫ້ລ່ວງເລີຍເຂົ້າໄປໂດຍທີ່ສຸດ ພຽງປາຍເສັ້ນຜົມ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໑. ລສຸນວັຄ ສິກຂາບົດທີ ໕ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໑໓] ເກີນ ໔ ຂໍ້ອົງຄຸລີ ພິກສຸນີສຳຄັນວ່າເກີນ ຊຳຣະ ຕ້ອງອາບັຕິປາຈິຕຕີຍ໌
ເກີນ ໔ ຂໍ້ອົງຄຸລີ ພິກສຸນີບໍ່ແນ່ໃຈ ຊຳຣະ ຕ້ອງອາບັຕິປາຈິຕຕີຍ໌
ເກີນ ໔ ຂໍ້ອົງຄຸລີ ພິກສຸນີສຳຄັນວ່າຫນ້ອຍກວ່າ ຊຳຣະ ຕ້ອງອາບັຕິປາຈິຕຕີຍ໌

**ທຸກທຸກກະຕະ**

ຫນ້ອຍກວ່າ ໔ ຂໍ້ອົງຄຸລີ ພິກສຸນີສຳຄັນວ່າເກີນ ຕ້ອງອາບັຕິທຸກກະຕະ
ຫນ້ອຍກວ່າ ໔ ຂໍ້ອົງຄຸລີ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ຫນ້ອຍກວ່າ ໔ ຂໍ້ອົງຄຸລີ ພິກສຸນີສຳຄັນວ່າຫນ້ອຍກວ່າ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໑໔] ໑. ພິກສຸນີຊຳຣະນຶກພຽງ ໔ ຂໍ້ອົງຄຸລີເປັນຢ່າງຫລາຍ
໒. ພິກສຸນີຊຳຣະນຶກບໍ່ເຖິງ ໔ ຂໍ້ອົງຄຸລີ
໓. ພິກສຸນີຊຳຣະນຶກເກີນເພາະອາພາທເປັນເຫຕຸ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ຝ ນິທານວັຕຖຸ ໑. ລສຸນວັຄ

**ສິກຂາບົດທີ ຝ**

ວ່າດ້ວຍການປົນນິບັຕິ

**ເຣື້ອງພິກສຸນີອດີຕພັຣຍາມຫາອມາຕຍ໌**

[໗໑໕] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ມຫາອມາຕຍ໌ຊື່ອາໄຣຫັນຕະບວຊໃນສໍານັກພິກສຸ ອດີຕພັຣຍາຂອງທ່ານບວຊໃນສໍານັກພິກສຸນີ ຕໍ່ມາ ພິກສຸນັ້ນຮ່ວມສັນພັຕຕາຫານໃນສໍານັກຂອງພິກສຸນີນັ້ນຂນະທີ່ທ່ານກໍາລັງສັນ ພິກສຸນີນັ້ນເຂົ້າໄປຢືນປົນນິບັຕິຢູ່ໃກ້ໆດ້ວຍນໍ້າສັນແລະການພັດວີ ເວົ້າກ່ຽວກັບເຣື້ອງຄອບຄົວ ເວົ້າຫລາຍເກີນໄປ ລໍາດັບນັ້ນ ພິກສຸນັ້ນຈຶ່ງຕໍ່ວ່າພິກສຸນີນັ້ນວ່າ "ນ້ອງຍິງຢ່າໄດ້ເຮັດຢ່າງນີ້ ເຣື້ອງນີ້ບໍ່ສົມຄວຣ" ພິກສຸນີນັ້ນກ່າວວ່າ "ເມື່ອກ່ອນທ່ານເຮັດຢ່າງນີ້ໆກັບຂະນ້ອຍ ບັດນີ້ພຽງເທົ່ານີ້ກໍທົນບໍ່ໄດ້" ຈຶ່ງຂ້ອມຂັນນໍ້າລົງເທິງສີສະແລ້ວໃຊ້ພັດຕີ ບັນດາພິກສຸນີຜູ້ມັກນ້ອຍ ຯລຯພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງຕີພິກສຸລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຕີພິກສຸ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາຫນິວ່າ "ຯລຯ ພິກສຸທັງຫລາຍຈັ່ງໃດພິກສຸນີຈຶ່ງຕີພິກສຸລະ ພິກສຸທັງຫລາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ຝ ບົທພາຊນີຍ໌ ພຣະບັນຍັດ

[໘໑໖] ກໍພິກສຸນີໃດປິນນິບັຕິພິກສຸຜູ້ກໍາລັງສັນຢູ່ດ້ວຍນໍ້າດື່ມຫລືດ້ວຍກາຣພັດວີ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງວດິດພັຣຍາຂອງມຫາອມາຕຍ໌ ຈົບ

**ສິກຂາບົທວິພັງຄ໌**

[໘໑໗] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ພິກສຸນີນີ້ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄໍາວ່າ ພິກສຸ ຄື ອຸປສົມບັນ
ຄໍາວ່າ ຜູ້ກໍາລັງສັນຢູ່ ຄື ຜູ້ກໍາລັງສັນໂພຊນະ ໕ ຢ່າງໃດຢ່າງນຶ່ງ
ທີ່ຊື່ວ່າ ນໍ້າດື່ມ ໄດ້ແກ່ ນໍ້າດື່ມຊນິດໃດຊນິດນຶ່ງ
ທີ່ຊື່ວ່າ ກາຣພັດວີ ໄດ້ແກ່ ພັດຊນິດໃດຊນິດນຶ່ງ
ຄໍາວ່າ ປິນນິບັຕິຢູ່ ຄວາມວ່າ ຢືນຢູ່ໃນຣະຍະຫັຕຖບາສ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໘໑໘] ອຸປສົມບັນ໑ ພິກສຸນີສໍາຄັນວ່າເປັນອຸປສົມບັນ ປິນນິບັຕິຢູ່ດ້ວຍນໍ້າດື່ມຫລືກາຣພັດວີ ຕ້ອງອາບັຕິປາຈິຕຕີຍ໌
ອຸປສົມບັນ ພິກສຸນີບໍ່ແນ່ໃຈ ປິນນິບັຕິຢູ່ດ້ວຍນໍ້າດື່ມຫລືກາຣພັດວີ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**
໑ “ອຸປສົມບັນ” ໃນທີ່ນີ້ຫມາຍເຖິງພິກສຸທີ່ພິກສຸນີນັ້ນປິນນິບັຕິ

ອຸປສົມບັນ ພິກສຸນີສໍາຄັນວ່າເປັນອນຸປສົມບັນ ປິນນິບັຕິຢູ່ດ້ວຍນໍ້າດື່ມຫລືກາຣພັດວີ ຕ້ອງອາບັຕິປາຈິຕຕີຍ໌ທຸກກະຕະ
ພິກສຸນີປິນນິບັຕິຢູ່ນອກຫັຕຖບາສ ຕ້ອງອາບັຕິທຸກກະຕະ
ພິກສຸກໍາລັງຄ້ຽວຂອງຄ້ຽວ ພິກສຸນີເຂົ້າໄປປິນນິບັຕິ ຕ້ອງອາບັຕິທຸກກະຕະ

ພິກສຸນີເຂົ້າໄປປົນນິບັດອນຸປສັມບັນ ຕ້ອງອາບັດທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັດທຸກກະຕະ
ອນຸປສັມບັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັດທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັດທຸກກະຕະ

**ອນາປັດຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[ກ໑໙] ໑. ພິກສຸນີຖອາຍ

໒. ພິກສຸນີໃຫ້ຄົນອື່ນຖອາຍ

໓. ພິກສຸນີສັ່ງອນຸປສັມບັນໃຫ້ປົນນິບັດ

໔. ພິກສຸນີວິກົລຈິດ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໖ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິດຕິຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ໗ ນິທານວັຕຖຸ**
**໑. ລສຸນວັຄ**

**ສິກຂາບົດທີ ໗**

ວ່າດ້ວຍການຂໍເຂົ້າເປືອກດິບ

**ເຣື້ອງພິກສຸນີຫລາຍຮູບ**

[ກ໔໐] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ໃນຣະດູເກັບກ່ຽວ ພວກພິກສຸນີອອກປາກຂໍເຂົ້າເປືອກດິບ ນຳໄປໃນເມືອງ ພໍເຖິງປະຕູເມືອງ ພວກຄົນເຝົ້າປະຕູກັກຕົວໄວ້ໂດຍກ່າວວ່າ "ແມ່ເຈົ້າ ທ່ານທັງຫລາຍໂປຣດໃຫ້ສ່ວນແບ່ງແດ່" ແລ້ວປ່ອຍໄປ ຄັນກັບເຖິງສຳນັກໄດ້ບອກເຣື້ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງອອກປາກຂໍເຂົ້າເປືອກດິບລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີອອກປາກຂໍເຂົ້າເປືອກດິບແມ່ນແທ້ບໍ່" ພິກສຸທັງຫລາຍທູລຣັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງອອກປາກຂໍເຂົ້າເປືອກດິບ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຣັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໔໑] ກໍພິກສຸນີໃດອອກປາກຂໍຫລືໃຊ້ໃຫ້ອອກປາກຂໍ ຂົ້ວຫລືໃຊ້ໃຫ້ຂົ້ວຕຳຫລືໃຊ້ໃຫ້ຕຳຫຸງຫລືໃຊ້ໃຫ້ຫຸງເຂົ້າເປືອກດິບແລ້ວສັນ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໑. ລສຸນວັຄ ສິກຂາບົດທີ ໗ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໗໔໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ເຂົ້າເປືອກດິບ ໄດ້ແກ່ ເຂົ້າສາລີ ເຂົ້າເຈົ້າ ເຂົ້າຫານງວ ເຂົ້າລະມານ ເຂົ້າຟ່າງ ຫມາກເດືອຍ ຫຍ້າກັບແກ້ວ
ຄຳວ່າ ອອກປາກຂໍ ຄື ອອກປາກຂໍເອງ
ຄຳວ່າ ໃຊ້ໃຫ້ອອກປາກຂໍ ຄື ໃຊ້ຜູ້ອື່ນໃຫ້ອອກປາກຂໍ

ຄຳວ່າ ຂົ້ວ ຄື ຂົ້ວເອງ
ຄຳວ່າ ໃຊ້ໃຫ້ຂົ້ວ ຄື ໃຊ້ຜູ້ອື່ນໃຫ້ຂົ້ວ
ຄຳວ່າ ຕຳ ຄື ຕຳເອງ
ຄຳວ່າ ໃຊ້ໃຫ້ຕຳ ຄື ໃຊ້ຜູ້ອື່ນໃຫ້ຕຳ
ຄຳວ່າ ຫຸງ ຄື ຫຸງເອງ
ຄຳວ່າ ໃຊ້ໃຫ້ຫຸງ ຄື ໃຊ້ຜູ້ອື່ນໃຫ້ຫຸງ
ພິກສຸນີຮັບປະເຄນ ດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັຕິທຸກກະຕະ ສັນ ຕ້ອງອາບັຕິ
ປາຈິຕຕີຍ໌ທຸກໆຄຳກືນ

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

**ໝາຍເຫດ :**
໑ ຮຽກວ່າ "ບຸພພັນນຊາຕິ" (ວິ. ອ. ໑/໑໐໔/໓໕໗, ສາຣັດຖ. ຕີກາ ໒/໑໐໔/໑໗໕)

[໗໔໓] ໑. ພິກສຸນີອອກປາກຂໍເຂົ້າມາສັນເພາະເຫຕຸຜົລຄືອາພາທ
໒. ພິກສຸນີອອກປາກຂໍອປຣັນນຊາຕິ໑
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ໝາຍເຫດ :**
໑ ອປຣັນນຊາຕິ ໄດ້ແກ່ ຖົ່ວຂຽວ ຖົ່ວຣາຊມາສ ງາ ພືຊຜັກທີ່ກິນຫລັງອາຫາຣ (ວິ. ອ. ໑/໑໐໔/໓໕໗, ສາຣັດຖ. ຕີກາ ໒/໑໐໔/໑໗໕)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ໗ ນິທານວັຕຖຸ ໑. ລສຸນວັຄ**

**ສິກຂາບົດທີ ໗**

ວ່າດ້ວຍການຖິ້ມອຸຈຈາຣະເປັນຕົ້ນພາຍນອກຝາ

**ເລື້ອງພຣາມນ໌ຄົນນຶ່ງ**

[໗໔໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພຣາມນ໌ຄົນນຶ່ງໄດ້ຮັບແຕ່ງຕັ້ງໃຫ້ເປັນຜູ້ເກັບສ່ວຍສິ່ງຫລວງ ໑ ຄິດວ່າ "ເຮົາຈັກທູລຂໍຕຳແຫນ່ງນາຍດ່ານນັ້ນ"໔ ຈຶ່ງສນານກະມ່ອມແລ້ວຍ່າງໄປຣາຊສຳນັກຜ່ານ ທີ່ຢູ່ພິກສຸນີ ພິກສຸນີຮູບນຶ່ງຖ່າຍອຸຈຈາຣະລົງໃນຫມໍ້ ແລ້ວເທຖິ້ມພາຍນອກຝາ ຣາດລົງເທິງສີສະ ຂອງພຣາມນ໌ນັ້ນພໍດີ ພຣາມນ໌ນັ້ນຕຳຫນິ ປະນາມ ໂພນທະນາວ່າ "ຍິງຊົ່ວຫົວໂລ້ນພວກນີ້ບໍ່ ແມ່ນສະມະນະຍິງ ຈັ່ງໃດຈຶ່ງເທຫມໍ້ຄູຖ ລົງທີ່ສີສະຂອງເຮົາ ເຮົາຈັກເຜົາສຳນັກພວກນາງ" ຖືຄົບຄອນເຂົ້າໄປສຳນັກພິກສຸນີ ອຸບາສິກຄົນນຶ່ງກຳລັງອອກຈາກສຳນັກພິກສຸນີ ໄດ້ເຫັນພຣາມນ໌ ນັ້ນຖືຄົບຄອນ

ຍ່າງເຂົ້າໄປສູ່ສຳນັກ ຈຶ່ງໄດ້ກ່າວກັບພຣາມນ໌ນັ້ນດັ່ງນີ້ວ່າ "ເຫຕຸໃດທ່ານຈຶ່ງຖືຄົບຄອນໄປສຳນັກ ພິກສຸນີລະ" ພຣາມນ໌ນັ້ນກ່າວວ່າ "ຍິງຊົ່ວຫົວໂລ້ນພວກນີ້ເທຫມໍ້ຄູຖລົງທີ່ສີສະຂອງເຮົາ ເຮົາ ຈັກເຜົາສຳນັກພວກນາງ" ອຸບາສິກກ່າວວ່າ "ກັບເຖີດ ພຣາມນ໌ຜູ້ຈະເຣີນ ເຫຕຸການນີ້ຈັດວ່າເປັນ ມຸງຄຸລ ທ່ານຈະໄດ້ຊັພຍ໌ ໑,໐໐໐ ແລະຈະໄດ້ຕຳແຫນ່ງນາຍດ່ານນັ້ນ" ພຣາມນ໌ນັ້ນສູດົມກະມ່ອມ ແລ້ວໄປຣາຊສຳນັກ ໄດ້ຊັພຍ໌ ໑,໐໐໐ ແລະໄດ້ຕຳແຫນ່ງນາຍດ່ານນັ້ນ

**ໝາຍເຫດ :**

໑ ພຣາມນ໌ຜູ້ນີ້ ເປັນຄົນທຳຫນ້າທີ່ເກັບສ່ວຍສິ່ງພຣະຣາຊາແລ້ວໄດ້ຮັບຕຳແຫນ່ງຫນ້າທີ່ຜູ້ນຶ່ງ ແລະ ໄດ້ຮັບຣາຍໄດ້ຈາກຕຳແຫນ່ງນັ້ນ ຕໍ່ມາຢາກໄດ້ຕຳແຫນ່ງນາຍດ່ານ ຈຶ່ງນຳສ່ວຍໄປສິ່ງພຣະຣາຊາ ເພື່ອຈະທູລຂໍຕຳແຫນ່ງນາຍດ່ານ (ວິ. ອ. ໒/໗໔໔/໔໒໓, ສາຣຕຖ. ຕີກາ ໓/໗໔໔/໑໕໔)

໔ ຈະສິ່ງສ່ວຍພຣະຣາຊາແລ້ວທູລຂໍຕຳແຫນ່ງນາຍດ່ານ (ວິ. ອ. ໒/໗໔໔/໔໒໓, ສາຣຕຖ. ຕີກາ. ໓/໗໔໔/໑໕໔) ໃນວຊິຣພຸທທິດີກາວ່າ ຈະໄປຂໍຄ່າບຳເຫນັຈ (ວຊິຣ. ຕີກາ ໗໔໔/໔໗໗)

ຄັ້ງນັ້ນ ອຸບາສິກນັ້ນກັບເຂົ້າໄປສຳນັກ ແຈ້ງເຣື້ອງນັ້ນແກ່ພິກສຸນີທັງຫລາຍແລ້ວບໍຣິພາສ໑ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພິກສຸນີທັງຫລາຍ ຈຶ່ງເທອຸຈຈາຣະ ພາຍນອກຝາລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີເທອຸຈຈາຣະພາຍນອກຝາ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງເທອຸຈຈາຣະພາຍນອກຝາລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂື້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໔໕] ກໍພິກສຸນີໃດເທຫລືໃຊ້ໃຫ້ເທອຸຈຈາຣະຫລືປັສສາວະ ກາກເຫຍື້ອຫລືຂອງເປັນເດນພາຍນອກຝາຫລືພາຍນອກກຳແພງ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພຣາມນ໌ຄົນນຶ່ງ ຈົບ

**ສິກຂາບົທວິພັງຄ໌**

[໗໔໖] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

**ໝາຍເຫດ :**

໑ ຄືປຣາມພວກພິກສຸນີວ່າ "ຢ່າກະທຳຢ່າງນີ້ອີກ" (ວິ. ອ. ໔/໗໔໔/໔໘໓)

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ອຸຈຈາຣະ ພຣະຜູ້ມີພຣະພາກຕຣັສໝາຍເຖິງຄູຖ
ທີ່ຊື່ວ່າ ປັສສາວະ ຕຣັສໝາຍເຖິງມູຕຣ
ທີ່ຊື່ວ່າ ກາກເຫຍື້ອ ຕຣັສໝາຍເຖິງຂີ້ເຫຍື້ອມູລຝອຍ
ທີ່ຊື່ວ່າ ຂອງເປັນເດນ ຕຣັສໝາຍເຖິງອາມິສທີ່ເປັນເດນ ກະດູກເປັນເດນ ຫລືນ້ຳເປັນເດນ
ທີ່ຊື່ວ່າ ຝາ ໄດ້ແກ່ ຝາ ໓ ຊນິດ ຄື (໑) ຝາອິດ (໒) ຝາແຜ່ນສິລາ (໓) ຝາໄມ້
ທີ່ຊື່ວ່າ ກຳແພງ ໄດ້ແກ່ ກຳແພງ ໓ ຊນິດ ຄື (໑) ກຳແພງອິດ (໒) ກຳແພງສິລາ (໓) ກຳແພງໄມ້
ຄຳວ່າ ພາຍນອກຝາ ຄື ອີກດ້ານນຶ່ງຂອງຝາ
ຄຳວ່າ ພາຍນອກກຳແພງ ຄື ອີກດ້ານນຶ່ງຂອງກຳແພງ
ຄຳວ່າ ເທ ຄື ເທເອງ ຕ້ອງອາບັຕິປາຈິຕຕີຍ໌
ຄຳວ່າ ໃຊ້ໃຫ້ເທ ຄື ໃຊ້ຜູ້ອື່ນໃຫ້ເທ ຕ້ອງອາບັຕິທຸກກະຕະ ຜູ້ຮັບຄຳສັ່ງຄັ້ງດຽວແຕ່ເທຫລາຍຄັ້ງ ພິກສຸນີຜູ້ສັ່ງ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີດັ່ງຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໒໗] ໑. ພິກສຸນີເບິ່ງດູກ່ອນແລ້ວຈຶ່ງເທ
໒. ພິກສຸນີເທໃນທີ່ທີ່ເຂົາບໍ່ໃຊ້ສັນຈອນ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ໘ ນິທານວັຕຖຸ**
**໑. ລສຸນວັຄ**

**ສິກຂາບົດທີ ໘**

ວ່າດ້ວຍການຖິ້ມອຸຈຈາຣະເປັນຕົ້ນພາຍນອກກຳແພງ

### ເລື່ອງພິກສຸນີຫລາຍຮູບ

[ໆ໔ໆ] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕະວັນ ອາຣາມຂອງອະນາຖະປິນທິກະເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ພຣາມນ໌ຄົນໜຶ່ງມີນາເຂົ້າຫນຽວແປງໜຶ່ງຢູ່ຕິດກັບສຳນັກພິກສຸນີ ພວກພິກສຸນີເຫອຸຈຈາຣະແດ່ ປັສສາວະແດ່ ກາກເຫຍື້ອແດ່ ຂອງເປັນເດນແດ່ ຖິ້ມລົງໃນນາເຂົ້າຫນຽວ(ຂອງພຣາມນ໌ນັ້ນ) ພຣາມນ໌ຕຳໜິປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງທຳນາເຂົ້າຫນຽວຂອງເຮົາໃຫ້ເສັຽຫາຍລະ" ພິກສຸນີທັງຫລາຍໄດ້ຍິນພຣາມນ໌ນັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີເຫອຸຈຈາຣະແດ່ ປັສສາວະແດ່ ກາກເຫຍື້ອແດ່ ຂອງເປັນເດນແດ່ ລົງເທິງຂອງຂຽວລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເລື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເລື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີເຫອຸຈຈາຣະແດ່ ປັສສາວະແດ່ ກາກເຫຍື້ອແດ່ ຂອງເປັນເດນແດ່ ລົງເທິງຂອງຂຽວ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງເຫອຸຈຈາຣະແດ່ ປັສສາວະແດ່ ກາກເຫຍື້ອແດ່ ຂອງເປັນເດນແດ່ ລົງເທິງຂອງຂຽວ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໑. ລສຸນວັຄ ສິກຂາບົດທີ ໙ ສິກຂາບົທວິພັງຄ໌

### ພຣະບັນຍັດ

[ໆ໔໙] ກໍພິກສຸນີໃດເຫຫລືໃຊ້ໃຫ້ເຫອຸຈຈາຣະຫລືປັສສາວະ ກາກເຫຍື້ອຫລືຂອງເປັນເດນລົງເທິງຂອງຂຽວ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[ກຼ໓໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ ອຸຈຈາຣະ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຄູຖ

ທີ່ຊື່ວ່າ ປັສສາວະ ຕຣັສຫມາຍເຖິງມູຕຣ

ທີ່ຊື່ວ່າ ກາກເຫຍື້ອ ຕຣັສຫມາຍເຖິງຂີ້ເຫຍື້ອມູລຝອຍ

ທີ່ຊື່ວ່າ ຂອງເປັນເດນ ຕຣັສຫມາຍເຖິງອາມິສທີ່ເປັນເດນ ກະດູກເປັນເດນ ຫລືນ້ຳເປັນເດນ

ທີ່ຊື່ວ່າ ຂອງຂຽວ ໄດ້ແກ່ ບຸພພັນນຊາຕິ ອປຣັນນຊາຕິ໑ທີ່ເຂົາປູກໄວ້ສຳລັບອຸປໂພຄບໍຣິໂພຄ

ຄຳວ່າ ເທ ຄື ເທເອງ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ໃຊ້ໃຫ້ເທ ຄື ໃຊ້ຜູ້ອື່ນໃຫ້ເທ ຕ້ອງອາບັຕິທຸກກະຕະ ຜູ້ຮັບຄຳສັ່ງຄັ້ງດຽວແຕ່ເທຫລາຍຄັ້ງພິກສຸນີຜູ້ສັ່ງຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ບຸພພັນນຊາຕິ ອປຣັນນຊາຕິ ເບິ່ງຂໍ້ ກຼ໔໔-ກຼ໔໕ ຫນ້າ ໑໔໔-໑໔໕ (ໝາຍເຫດ)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໑. ລສຸນວັຄ ສິກຂາບົດທີ ໙ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[ກຼ໓໑] ຂອງຂຽວ ພິກສຸນີສຳຄັນວ່າເປັນຂອງຂຽວ ເທຫລືໃຊ້ໃຫ້ເທ ຕ້ອງອາບັຕິປາຈິຕຕີຍ໌

ຂອງຂຽວ ພິກສຸນີບໍ່ແນ່ໃຈ ເທຫລືໃຊ້ໃຫ້ເທ ຕ້ອງອາບັຕິປາຈິຕຕີຍ໌

ຂອງຂຽວ ພິກສຸນີສຳຄັນວ່າບໍ່ແມ່ນຂອງຂຽວ ເທຫລືໃຊ້ໃຫ້ເທ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກຸກກະຕະ**

ບໍ່ແມ່ນຂອງຂຽວ ພິກສຸນີສໍາຄັນວ່າເປັນຂອງຂຽວ ເທຫລືໃຊ້ໃຫ້ເທ ຕ້ອງອາບັຕິທຸກກະຕະ
ບໍ່ແມ່ນຂອງຂຽວ ພິກສຸນີບໍ່ແນ່ໃຈ ເທຫລືໃຊ້ໃຫ້ເທ ຕ້ອງອາບັຕິທຸກກະຕະ
ບໍ່ແມ່ນຂອງຂຽວ ພິກສຸນີສໍາຄັນວ່າບໍ່ແມ່ນຂອງຂຽວ ເທຫລືໃຊ້ໃຫ້ເທ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໓໔] ໑. ພິກສຸນີເບິ່ງດູກ່ອນແລ້ວຈຶ່ງເທ
໔. ພິກສຸນີເທ**ເທິງ**ຄັນນາ
໓. ພິກສຸນີບອກເຈົ້າຂອງກ່ອນແລ້ວຈຶ່ງເທ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໘ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑. ລສຸນວັຄ ສິກຂາບົດທີ ໑໐ ນິທານວັຕຖຸ**
**໑. ລສຸນວັຄ**

**ສິກຂາບົດທີ ໑໐**

ວ່າດ້ວຍການດູການຂັບຮ້ອງຟ້ອນລໍາ

**ເຣື້ອງພິກສຸນີສັພພັຄຄີຍ໌**

[໗໓໓] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອແກ່ກະແຕ ເຂຕກຸງຣາຊຄຶຫ໌ ຄັ້ງນັ້ນ ມີງານມຫໍຣສົພ**ເທິງຍອດ**ເຂົາ ພວກພິກສຸນີສັພພັຄຄີຍ໌ພາກັນໄປເບິ່ງມຫໍຣສົພ**ເທິງຍອດ**ເຂົາ ພວກຊາວບ້ານຈຶ່ງຕໍາໜິ ປະນາມໂພນທະນາວ່າ “ຈັ່ງໃດພວກພິກສຸນີຈຶ່ງໄປເບິ່ງການຟ້ອນລໍາແດ່ ການຂັບຮ້ອງແດ່ ການປະສານສຽງດົນຕຣີແດ່ ເໝືອນຍິງຄຶຫັສຖ໌ຜູ້ບໍຣິໂພຄກາມລະ” ພິກສຸນີທັງຫລາຍໄດ້ຍິນຊາວບ້ານຕໍາໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້

ນັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີສັພພັຄຄີຍ໌ຈຶ່ງໄປດູການຟ້ອນລຳແດ່ ການຂັບຮ້ອງແດ່ ການປະສານສຽງດົນຕຣີແດ່ ເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເອົາເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພອກພິກສຸຈຶ່ງໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ພຣະພາຄຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພອກພິກສຸນີສັພພັຄຄີຍ໌ໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການປະສານສຽງດົນຕຣີແດ່ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງໄປເບິ່ງການຟ້ອນລຳແດ່ ການຂັບຮ້ອງແດ່ ການປະສານສຽງດົນຕຣີແດ່ລະ ພິກສຸທັງຫລາຍການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໑. ລສຸນວັຄ ສິກຂາບົດທີ ໑໐ ບົທພາຊນີຍ໌**

**ພຣະບັນຍັດ**

[໗໓໔] ກໍພິກສຸນີໃດໄປເບິ່ງການຟ້ອນລຳ ການຂັບຮ້ອງ ຫລືການປະສານສຽງດົນຕຣີ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີສັພພັຄຄີຍ໌ ຈົບ

**ສິກຂາບົທວິພັງຄ໌**

[໗໓໕] ຄຳວ່າ ກໍ. . . ໃດ ຄືຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະວ່າເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ການຟ້ອນລຳ ໄດ້ແກ່ ການຟ້ອນລຳຢ່າງໃດຢ່າງນຶ່ງ
ທີ່ຊື່ວ່າ ການຂັບຮ້ອງ ໄດ້ແກ່ ການຂັບຮ້ອງຢ່າງໃດຢ່າງນຶ່ງ
ທີ່ຊື່ວ່າ ການປະສານສຽງດົນຕຣີ ໄດ້ແກ່ ການປະສານສຽງດົນຕຣີຢ່າງໃດຢ່າງນຶ່ງ

**ບົທພາຊນີຍ໌**

[໗໖໖] ພິກສຸນີຍ່າງໄປເພື່ອທີ່ຈະດູ ຕ້ອງອາບັຕິທຸກກະຕະ ຢືນຢູ່ໃນທີ່ທີ່ພໍຈະເບິ່ງເຫັນຫລືໄດ້ຍິນ ຕ້ອງອາບັຕິປາຈິຕຕີຍ໌ ພົ້ນສາຍຕາໄປແລ້ວກັບແລດູຫລືຟັງອີກ ຕ້ອງອາບັຕິປາຈິຕຕີຍ໌
ພິກສຸນີຍ່າງໄປເພື່ອຈະດູມຫໍຣສົພແຕ່ລະຢ່າງ ຕ້ອງອາບັຕິທຸກກະຕະ ຢືນເບິ່ງຢູ່ໃນທີ່ທີ່ພໍຈະເບິ່ງເຫັນຫລືໄດ້ຍິນ ຕ້ອງອາບັຕິປາຈິຕຕີຍ໌ ພົ້ນສາຍຕາໄປແລ້ວກັບແລດູຫລືຟັງອີກ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໘. ອັນທກາຣວັຄ ສິກຂາບົດທີ ໑໐ ອນາປັຕຕິວາຣ**

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໖໗] ໑. ພິກສຸນີຢືນໃນອາຮາມ ເຫັນຫລືໄດ້ຍິນ ໑
໒. ພິກສຸນີຢືນ ນັ່ງຫລືນອນຢູ່ ເຂົາຟ້ອນລຳ ຂັບຮ້ອງ ຫລືປຣະໂຄມຜ່ານມາຍັງທີ່ນັ້ນໆ
໓. ພິກສຸນີຍ່າງສວນທາງໄປເຫັນຫລືໄດ້ຍິນ
໔. ພິກສຸນີມີທຸຣະຈຳເປັນຍ່າງຜ່ານໄປເຫັນຫລືໄດ້ຍິນ
໕. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໖. ພິກສຸນີວິກົລຈິຕ
໗. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ
ລສຸນວັຄທີ ໑ ຈົບ

**ໝາຍເຫດ :**
໑ ຢືນຢູ່ພາຍໃນອາຮາມ ເຫັນຫລືໄດ້ຍິນການຟ້ອນລຳເປັນຕົ້ນພາຍໃນອາຮາມຫລືພາຍນອກອາຮາມ (ວິ. ອ. ໔/໗໗໗/໔໙໕)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ອັນຫຼກາຣວັຄ ສິກຂາບົດທີ ໑ ນິທານວັຕຖຸ

### ໔. ອັນຫຼກາຣວັຄ
ຫມວດວ່າດ້ວຍຄວາມມືດ

### ສິກຂາບົດທີ ໑
ວ່າດ້ວຍການສົນທນາກັບຊາຍໃນທີ່ມືດ

### ເຣື່ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ
[໗໓໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ຊາຍຜູ້ເປັນຍາຕຂອງພິກສຸນີຜູ້ເປັນອັນເຕວາສີນີຂອງພຣະພັທທກາປິລານີຍ່າງທາງຈາກຫມູ່ບ້ານໄປກຸງສາວັຕຖີດ້ວຍທຸຣະບາງຢ່າງ ຄັ້ງນັ້ນ ພິກສຸນີນັ້ນຢືນຄຽງຄູ່ກັນແດ່ ສົນທນາກັນແດ່໑ສອງຕໍ່ສອງກັບຊາຍນັ້ນໃນເວລາຄ່ຳຄືນ ບໍ່ມີປະທີປ໔ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີປລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ
ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີປ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະ

ເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ"ຯລຯ ພິກສຸນີທັງຫລາຍ ຈັ່ງໃດພິກສຸນີຈຶ່ງຢືນ ຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງ

**ໝາຍເຫດ :**

໑ ຫມາຍເຖິງສົນທນາກັນໃນເຣື່ອງກ່ຽວກັບກາຣຄອງເຮືອນ (ວິ. ອ. ໔/໗໘໙/໔໙໕)
໔ ຄຳວ່າ "ບໍ່ມີປະທີປ" ຫມາຍເຖິງບໍ່ມີແສງສວ່າງຢ່າງໃດຢ່າງນຶ່ງ ໃນບັນດາແສງຕະກຽງ ແສງ ຈັນທຣ໌ ແສງອາທິຕຍ໌ ແລະແສງໄຟ (ວິ. ອ. ໔/໗໘໙/໔໙໕)

ກັບຊາຍ ໃນເວລາຄ່ຳຄືນບໍ່ມີປະທີປລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໘໙] ກໍພິກສຸນີໃດຢືນຄຽງຄູ່ກັນຫລືສົນທນາກັນສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີປ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ ຈົບ

**ສິກຂາບົທວິພັງຄ໌**

[໗໙໐] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ໃນເວລາຄ່ຳຄືນ ໄດ້ແກ່ ເມື່ອດວງອາທິຕຍ໌ຕົກແລ້ວ
ຄຳວ່າ ບໍ່ມີປະທີປ ຄື ບໍ່ມີແສງສວ່າງ
ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເປຕ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນມະນຸສຍ໌ຜູ້ຊາຍທີ່ຮູ້ດຽງສາ ສາມາດຢືນຄຽງຄູ່ກັນ ສົນທນາກັນໄດ້
ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ
ຄຳວ່າ ສອງຕໍ່ສອງ ຄື ຊາຍ ແລະພິກສຸນີ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌
ຄຳວ່າ ຫລືສິ້ນຫນາກັນ ຄື ຢືນເຈຣຈາຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໔. ອັນທກາຣວັຄ ສິກຂາບົດທີ ໑ ອນາປັຕຕິວາຣ

ຢືນຄຽງຄູ່ກັນ ຫລືສິ້ນຫນາກັນພົ້ນຣະຍະຊ່ວງແຂນ ຕ້ອງອາບັຕິທຸກກະຕະ
ຢືນຄຽງຄູ່ກັນ ຫລືສິ້ນຫນາກັນກັບຍັກສ໌ ເຜດ ກະເທີຍຫລືສັຕວ໌ເດັຽຣະສານຕົວຜູ້ ທີ່ມີຮ່າງຄ້າຍມະນຸສຍ໌ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໔໑] ໑. ພິກສຸນີມີສະຕຣີຄົນໃດຄົນນຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ
໒. ພິກສຸນີຜູ້ບໍ່ປະສົງຄ໌ຈະຢູ່ໃນທີ່ລັບ ຢືນຄຽງຄູ່ກັນຫລືສິ້ນຫນາກັນ
໓. ພິກສຸນີທີ່ຢືນຄຽງຄູ່ກັນ ຫລືສິ້ນຫນາກັນແຕ່ຄິດໃນເຣື້ອງອື່ນ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໔. ອັນທກາຣວັຄ ສິກຂາບົດທີ ໔ ນິທານວັຕຖຸ

### ໔. ອັນທກາຣວັຄ

**ສິກຂາບົດທີ ໔**

ວ່າດ້ວຍການຢືນກັບຊາຍໃນທີ່ກຳບັງ

**ເລື້ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ**

[໘໔໔] ສະໄມຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັດຖີ ຄັ້ງນັ້ນ ຊາຍຜູ້ເປັນຍາຕຂອງພິກສຸນີຜູ້ເປັນອັນເຕວາສີນີຂອງພຣະພັທທກາປິລານີຍ່າງທາງຈາກຫມູ່ບ້ານໄປກຸງສາວັດຖີດ້ວຍທຸຣະບາງຢ່າງ ລຳດັບນັ້ນ ພິກສຸນີນັ້ນຄິດວ່າ "ພຣະຜູ້ມີພຣະພາກຊົງຫ້າມຢືນຄຽງຄູ່ກັນ ສົນທນາກັນສອງຕໍ່ສອງກັບຊາຍໃນເວລາຄ່ຳມືດ ບໍ່ມີປະທີປ" ຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ໃນໂອກາສທີ່ກຳບັງ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນໂອກາສທີ່ກຳບັງລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນໂອກາສທີ່ກຳບັງ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນໂອກາສທີ່ກຳບັງລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໔. ອັນທກາຣວັຄ ສິກຂາບົດທີ ໔ ສິກຂາບົທວິພັງຄ໌**

**ພຣະບັນຍັດ**

[໘໔໕] ກໍພິກສຸນີໃດຢືນຄຽງຄູ່ກັນ ຫລືສົນທນາກັນສອງຕໍ່ສອງກັບຊາຍໃນໂອກາສທີ່ກຳບັງ ຕ້ອງອາບັຕິປາຈິຕຕີຍ໌

ເລື້ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ ຈົບ

**ສິກຂາບົທວິພັງຄ໌**

[໓໔໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອທິບາຍວ່າ ຊື່ວ່າພິກສຸນີ ເພາະວ່າເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ໂອກາສຊື່ວ່າ ທີ່ກຳບັງ ໄດ້ແກ່ ທີ່ກຳບັງດ້ວຍຝາ ບານປະຕູ ເສື່ອລຳແພນ ມ່ານຕົ້ນໄມ້ ເສົາ ຫລື ພ້ອມ໑ ຢ່າງໃດຢ່າງນຶ່ງ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນມະນຸສຍ໌ຜູ້ຊາຍທີ່ຮູ້ດຽງສາ ສາມາດຈະຢືນຄຽງຄູ່ສົນທນາກັນໄດ້

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ຄື ຊາຍ ແລະພິກສຸນີ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ຫລືສົນທນາກັນ ຄື ສົນທນາຢູ່ໃນຣະຍະຊ່ວງແຂນຜູ້ຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຢືນຄຽງຄູ່ກັນ ຫລືສົນທນາກັນພົ້ນຣະຍະຊ່ວງແຂນ ຕ້ອງອາບັຕິທຸກກະຕະ

ຢືນຄຽງຄູ່ກັນ ຫລືສົນທນາກັນກັບຍັກສ໌ ເຜດ ກະເຫີຍ ຫລືສັຕວ໌ເດັຽຣະສານຕົວຜູ້ທີ່ມີຮ່າງຄ້າຍມະນຸສຍ໌ ຕ້ອງອາບັຕິທຸກກະຕະ

**ໝາຍເຫດ :**

໑ "ພ້ອມ" ຄືພາຊນະສານຂນາດໃຫຍ່ສຳລັບບັນຈຸເຂົ້າເປືອກ ບາງທີຮຽກວ່າ ກຣະພ້ອມ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໔. ອັນທກາຣວັຄ ສິກຂາບົດທີ ໔ ອນາປັຕຕິວາຣ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໓໔໕] ໑. ພິກສຸນີມີສະຕຣີຄົນໃດຄົນນຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໔. ພິກສຸນີຜູ້ບໍ່ປະສົງຄ໌ທີ່ຈະຢູ່ໃນທີ່ລັບ ຢືນຄຽງຄູ່ກັນ ຫລືສົນທນາກັນ

໓. ພິກສຸນີທີ່ຢືນຄຽງຄູ່ກັນ ຫລືສົນທນາກັນແຕ່ຄິດໃນເຣື່ອງອື່ນ

໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ພຣະວິນັຍປິຎົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑. ອັນທຸກາຣວັຄ ສິກຂາບົດທີ ໖ ນິທານວັຕຖຸ**

**໑. ອັນທຸກາຣວຣຄ**

**ສິກຂາບົດທີ ໖**

ວ່າດ້ວຍການສົນທນາກັບຊາຍໃນທີ່ແຈ້ງ

**ເຣື້ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ**

[໗໔໖] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ຊາຍຜູ້ເປັນຍາຕຂອງພິກສຸນີຜູ້ເປັນອັນເຕວາສີນີຂອງພຣະ ພັທທກາປິລານີຍ່າງທາງຈາກໝູ່ບ້ານໄປກຸງສາວັຕຖີດ້ວຍທຸຣະບາງຢ່າງລຳດັບນັ້ນ ພິກສຸນີນັ້ນຄິດວ່າ "ພຣະຜູ້ມີພຣະພາກຊົງຫ້າມຢືນຄຽງຄູ່ກັນ ສົນທນາກັນສອງຕໍ່ສອງກັບຊາຍໃນໂອກາສທີ່ກຳບັງ" ຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງ ພິກສຸນີຜູ້ມັກນ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດນາງພິກສຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ຈິງພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍຈັ່ງໃດພິກສຸນີຈຶ່ງຢືນຄຽງຄູ່ກັນແດ່ ສົນທນາກັນແດ່ສອງຕໍ່ສອງກັບຊາຍໃນທີ່ແຈ້ງລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່

ຍັງບໍ່ເຫລື້ອມໃສ໌ໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ອັນຫຼກາຣວັຄ ສິກຂາບົດທີ ໖ ສິກຂາບົທວິພັງຄ໌**

**ພຣະບັນຍັດ**

[໗໔໗] ກໍພິກສຸນີໃດຢືນຄຽງຄູ່ກັນຫລືສົນທນາກັນສອງຕໍ່ສອງກັບຊາຍໃນທີ່ແຈ້ງ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ ຈົບ

**ສິກຂາບົທວິພັງຄ໌**

[໗໔໘] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ທີ່ແຈ້ງ ໄດ້ແກ່ ສະຖານທີ່ບໍ່ໄດ້ກໍາບັງດ້ວຍຝາ ບານປະຕູ ເສື່ອລໍາແພນ ມ່ານຕົ້ນໄມ້ ເສົາຫລືພ້ອມຢ່າງໃດຢ່າງນຶ່ງ
ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ແຕ່ເປັນມະນຸສຍ໌ຜູ້ຊາຍທີ່ຮູ້ດຽງສາ ສາມາດຢືນຄຽງຄູ່ສົນທນາກັນໄດ້
ຄໍາວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ
ຄໍາວ່າ ສອງຕໍ່ສອງ ຄື ຊາຍ ແລະພິກສຸນີ
ຄໍາວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌
ຄໍາວ່າ ຫລືສົນທນາກັນ ຄື ສົນທນາຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌
ຢືນຄຽງຄູ່ກັນ ຫລືສົນທນາກັນພົ້ນຣະຍະຊ່ວງແຂນ ຕ້ອງອາບັຕິທຸກກະຕະ
ຢືນຄຽງຄູ່ກັນ ຫລືສົນທນາກັນກັບຍັກສ໌ ເຜດ ກະເທີຍ ຫລືສັຕວ໌ເດັຽຣະສານຕົວຜູ້ທີ່ມີຮ່າງຄ້າຍມະ

ນຸສຍ໌ ຕ້ອງອາບັຕິທຸກກະຕະ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໒. ອັນທກາຣວັຄ ສິກຂາບົດທີ ໓ ອນາປັຕຕິວາຣ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[ກ໔໙] ໑. ພິກສຸນີມີສະຕຣີຄົນໃດຄົນນຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໒. ພິກສຸນີຜູ້ບໍ່ປະສົງຄ໌ທີ່ຈະຢູ່ໃນທີ່ລັບ ຢືນຄຽງຄູ່ກັນ ຫລືສົນທນາກັນ

໓. ພິກສຸນີທີ່ຢືນຄຽງຄູ່ກັນ ຫລືສົນທນາກັນແຕ່ຄິດໃນເຣື້ອງອື່ນ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໓ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໒. ອັນທກາຣວັຄ ສິກຂາບົດທີ ໔ ນິທານວັຕຖຸ

### ໒. ອັນທກາຣວັຄ

### ສິກຂາບົດທີ ໔

ວ່າດ້ວຍການສົ່ງເພື່ອນພິກສຸນີກັບ

**ເຣື້ອງພິກສຸນີຖຸລລະນັນທາ**

[ກ໕໐] ສະມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາຢືນຄຽງຄູ່ກັນແດ່ ສົນທນາກັນແດ່ ເວົ້າກະຊິບຂ້າງຫູແດ່ສອງຕໍ່ສອງກັບຊາຍໃນຖນົນແດ່ ທາງຮ່ອມຕັນແດ່ ທາງສາມແຍກແດ່ ສົ່ງພິກສຸນີຜູ້ເປັນເພື່ອນກັບໄປກ່ອນແດ່ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ

ໂພນທະນາວ່າ "ຈັ່ງໃດພິກສຸນີຖຸລລະນັນທາຢືນຄຽງຄູ່ກັນແດ່ ສົນທນາກັນແດ່ ເວົ້າຊິ່ມຂ້າງຫູແດ່ ສອງຕໍ່ ສອງກັບຊາຍໃນຖນົນແດ່ ຮ່ອມຕັນແດ່ ທາງສາມແຍກແດ່ ສົ່ງພິກສຸນີຜູ້ເປັນເພື່ອນກັບໄປ ກ່ອນແດ່ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເອື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກ ພິກສຸຈຶ່ງໄດ້ນຳເອື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາຢືນຄຽງຄູ່ກັນແດ່ ສົນທນາກັນແດ່ ເວົ້າຊິ່ມຂ້າງຫູແດ່ສອງຕໍ່ສອງກັບຊາຍໃນຖນົນແດ່ ທາງຮ່ອມຕັນແດ່ ທາງສາມແຍກແດ່ ສົ່ງພິກສຸ ນີ ຜູ້ເປັນເພື່ອນກັບໄປກ່ອນແດ່ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະ ເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ"ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີ ຖຸລລະນັນທາຢືນຄຽງຄູ່ກັນແດ່ ສົນທນາກັນແດ່ ເວົ້າຊິ່ມຂ້າງຫູແດ່ ສອງຕໍ່ສອງກັບຊາຍໃນຖນົນແດ່ ທາງຮ່ອມ ຕັນແດ່ ທາງສາມແຍກແດ່ ສົ່ງພິກສຸນີຜູ້ເປັນເພື່ອນກັບໄປກ່ອນແດ່ລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑. ອັນທກາຣວັຄ ສິກຂາບົດທີ ໔ ສິກຂາບົທວິພັງຄ໌**

**ພຣະບັນຍັດ**

[໗໕໑] ກໍພິກສຸນີໃດຢືນຄຽງຄູ່ກັນ ຫລືສົນທນາກັນ ຫລືເວົ້າຊິ່ມຂ້າງຫູແດ່ ສອງຕໍ່ສອງກັບຊາຍ ໃນຖນົນແດ່ ທາງຮ່ອມຕັນແດ່ ທາງສາມແຍກແດ່ ຫລືສົ່ງພິກສຸນີຜູ້ເປັນເພື່ອນກັບໄປ ຕ້ອງອາບັຕິ ປາຈິຕຕີຍ໌

ເອື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[ຓ໕໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຖນົນ ໄດ້ແກ່ ພຣະຜູ້ມີພຣະພາກຕຣັສຫມາຍເຖິງທາງຍ່າງ

ທີ່ຊື່ວ່າ ທາງຮ່ອມຕັນ ໄດ້ແກ່ ຄົນເຂົ້າໄປທາງໃດຕ້ອງຍ່າງອອກທາງນັ້ນ

ທີ່ຊື່ວ່າ ທາງສາມແຍກ ໄດ້ແກ່ ພຣະຜູ້ມີພຣະພາກຕຣັສຫມາຍເຖິງທາງແຍກ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນມະນຸສຍ໌ຜູ້ຊາຍທີ່ຮູ້ດຽງສາ ສາມາດຢືນຮ່ອມກັນ ສົນທນາກັນໄດ້

ຄຳວ່າ ກັບ ຄື ໂດຍຄວາມເປັນອັນດຽວກັນ

ຄຳວ່າ ສອງຕໍ່ສອງ ຄື ຊາຍ ແລະພິກສຸນີ

ຄຳວ່າ ຢືນຄຽງຄູ່ກັນ ຄື ຢືນຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ຫລືສົນທນາກັນ ຄື ສົນທນາກັນຢູ່ໃນຣະຍະຊ່ວງແຂນຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ຫລືເວົ້າກຣະຊິບຂ້າງຫູ ຄື ບອກເນື້ອຄວາມໃກ້ຫູຊາຍ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ຫລືສົ່ງພິກສຸນີຜູ້ເປັນເພື່ອນກັບໄປ ຄື ປະສົງຄ໌ຈະປະພຶດບໍ່ສົມຄວຣ ຈຶ່ງສົ່ງພິກສຸນີຜູ້ເປັນເພື່ອນກັບໄປ ຕ້ອງອາບັຕິປາຈິຕຕີຍ໌ ເມື່ອພິກສຸນີຜູ້ເປັນເພື່ອນພົ້ນຣະຍະທີ່ຈະເບິ່ງເຫັນ ຫລືຣະຍະທີ່ຈະໄດ້ຍິນ ຕ້ອງອາບັຕິທຸກກະຕະ ເມື່ອພິກສຸນີຜູ້ເປັນເພື່ອນພົ້ນໄປແລ້ວ ຕ້ອງອາບັຕິປາຈິຕຕີຍ໌

ຢືນຄຽງຄູ່ກັນ ຫລືສົນທນາກັນກັບຊາຍພົ້ນຣະຍະຊ່ວງແຂນ ຕ້ອງອາບັຕິທຸກກະຕະ

ຢືນຄຽງຄູ່ກັນ ຫລືສົນທນາກັນກັບຍັກສ໌ ເຜດ ກະເທີຍ ຫລືສັຕວ໌ເດັຽຣະສານຕົວຜູ້ທີ່ມີຮ່າງຄ້າຍມະນຸສຍ໌ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[ຓ໕໖] ໑. ພິກສຸນີມີສະຕຣີຄົນໃດຄົນນຶ່ງທີ່ຮູ້ດຽງສາຢູ່ເປັນເພື່ອນ

໒. ພິກສຸນີຜູ້ບໍ່ປະສົງຄ໌ທີ່ຈະຢູ່ໃນທີ່ລັບຢືນຄຽງຄູ່ກັນຫລືສົນທນາກັນ

໓. ພິກສຸນີທີ່ຢືນຄຽງຄູ່ກັນຫລືສົນທນາກັນແຕ່ຄິດໃນເຣື້ອງອື່ນ

໔. ພິກສຸນີສົ່ງເພື່ອນພິກສຸນີກັບເມື່ອມີເຫຕຸຈຳເປັນ

໕. ພິກຂຸນີວິກົລຈິຕ
໖. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ອັນທຸກາຣວັຄ ສິກຂາບົດທີ ໕ ນິທານວັຕຖຸ

## ໔. ອັນທຸກາຣວັຄ

### ສິກຂາບົດທີ ໕

ວ່າດ້ວຍການຈາກໄປໂດຍບໍ່ບອກເຈົ້າຂອງ

### ເຣື່ອງພິກຂຸນີຮູບນຶ່ງ

[໗໕໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີຮູບນຶ່ງເປັນພິກຂຸນີປະຈຳຕະກູນນຶ່ງ ຮັບພັຕຕາຫາຣປະຈຳ ຄັນເວລາເຊົ້າ ພິກຂຸນີນັ້ນຄອງອັນຕຣວາສົກ ຖືບາຕຣແລະຈີວອນດເຂົ້າໄປເຖິງທີ່ຕະກູນນັ້ນ ຄັນເຖິງແລ້ວ ນັ່ງເທິງອາສນະ ແລ້ວຈາກໄປໂດຍບໍ່ບອກເຈົ້າຂອງບ້ານ ຍິງຮັບໃຊ້ຕະກູນນັ້ນກວາດເຮືອນໄດ້ເກັບອາສນະນັ້ນໄວ້ຣະຫວ່າງພາຊນະ ຄົນໃນບ້ານບໍ່ເຫັນອາສນະ ໄດ້ໄປຖາມພິກຂຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ອາສນະຢູ່ທີ່ໃດ" ພິກຂຸນີນັ້ນກ່າວວ່າ "ທ່ານທັງຫລາຍ ຂະນ້ອຍກໍບໍ່ເຫັນອາສນະນັ້ນ" ຄົນເຫລົ່ານັ້ນເວົ້າວ່າ "ແມ່ເຈົ້າ ໄປຣດໃຫ້ອາສນະນັ້ນເຖີດ" ບໍຣິພາສແລ້ວເຊົາຖວາຍພັຕຕາຫາຣປະຈຳ ຕໍ່ມາຄົນເຫລົ່ານັ້ນທຳຄວາມສະອາດບ້ານຫລັງນັ້ນ ພົບອາສນະລີ້ຢູ່ຣະຫວ່າງພາຊນະຈຶ່ງຂໍຂມາພິກຂຸນີນັ້ນ ແລ້ວໄດ້ເລີ້ມ(ຖວາຍ)ພັຕຕາຫາຣປະຈຳ ຄັ້ງນັ້ນ ພິກຂຸນີນັ້ນບອກເຣື່ອງນັ້ນໃຫ້ພິກຂຸນີທັງຫລາຍຊາບ ບັນດາພິກຂຸນີຜູ້ມັກນ້ອຍ ฯລฯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກຂຸນີຈຶ່ງເຂົ້າໄປສູ່ຕະກູນໃນເວລາກ່ອນສັນພັຕຕາຫາຣ ນັ່ງເທິງອາສນະແລ້ວຈາກໄປໂດຍບໍ່ບອກເຈົ້າຂອງ(ບ້ານ)ລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸຈຶ່ງໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຂາບວ່າ ພິກສຸນີເຂົ້າສູ່ຕະກູນໃນເວລາ

**ໝາຍເຫດ :**

໑ ຄວງອັນຕຣອາສຸກຖືບາຕຣຈີວອນ ດູ ວິນັຍປິດົກແປລ ເຫລັ້ມ ໑ ຂໍ້ ໔໔ ໜ້າ ໑໔ (ໝາຍ ເຫດ)

ກ່ອນສັນພັຕຕາຫາຣ ນັ່ງເຫິງອາສນະແລ້ວຈາກໄປໂດຍບໍ່ບອກເຈົ້າຂອງບ້ານ ແມ່ນແທ້ບໍ່" ພິກສຸ ທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ฯລฯ ພິກສຸທັງຫລາຍ ຈັ່ງໃດພິກສຸນີເຂົ້າສູ່ຕະກູນໃນເວລາກ່ອນສັນພັຕຕາຫາຣ ນັ່ງເຫິງອາສນະ ແລ້ວຈາກໄປໂດຍບໍ່ບອກເຈົ້າຂອງບ້ານລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[ກ໕໕] ກໍພິກສຸນີໃດເຂົ້າໄປສູ່ຕະກູນໃນເວລາກ່ອນສັນພັຕຕາຫາຣ ນັ່ງເຫິງອາສນະແລ້ວຈາກໄປ ໂດຍບໍ່ບອກເຈົ້າຂອງບ້ານ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຮູບນຶ່ງ ຈົບ

**ສິກຂາບົທວິພັງຄ໌**

[ກ໕໖] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ເວລາກ່ອນສັນພັຕຕາຫາຣ ຄື ຕັ້ງແຕ່ເວລາອຣຸນຂຶ້ນຈົນເຖິງທ່ຽງວັນ

ທີ່ຊື່ວ່າ ຕະກູນ ໝາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກສັຕຣິຍ໌ ຕະກູນພຣາມນ໌ຕະກູນແພສຍ໌ ຕະກູນ ສູທຣ

ຄຳວ່າ ເຂົ້າໄປ ຄື ໄປໃນຕະກູນນັ້ນ
ທີ່ຊື່ວ່າ ອາສົນະ ພຣະຜູ້ມີພຣະພາກຕຣັສຫມາຍເຖິງທີ່ສຳລັບນັ່ງຂັດສະມາທິ
ຄຳວ່າ ນັ່ງ ຄື ນັ່ງເທິງອາສົນະນັ້ນ
ຄຳວ່າ ຈາກໄປໂດຍບໍ່ໄດ້ບອກເຈົ້າຂອງບ້ານ ຄວາມວ່າ ບໍ່ບອກຄົນໃດຄົນນຶ່ງໃນຕະກູນນັ້ນຜູ້ຮູ້ດຽງສາ ກ້າວພົ້ນຊາຍຄາ ຕ້ອງອາບັຕິປາຈິຕຕີຍ໌ ຍ່າງລ່ວງເຂດບ້ານໃນທີ່ແຈ້ງ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໕໗] ຍັງບໍ່ໄດ້ບອກ ພິກສຸນີສຳຄັນວ່າຍັງບໍ່ໄດ້ບອກ ຈາກໄປ ຕ້ອງອາບັຕິປາຈິຕຕີຍ໌
ຍັງບໍ່ໄດ້ບອກ ພິກສຸນີບໍ່ແນ່ໃຈ ຈາກໄປ ຕ້ອງອາບັຕິປາຈິຕຕີຍ໌
ຍັງບໍ່ໄດ້ບອກ ພິກສຸນີສຳຄັນວ່າບອກແລ້ວ ຈາກໄປ ຕ້ອງອາບັຕິປາຈິຕຕີຍ໌

**ຕິກທຸກກະຕະ**

ທີ່ບໍ່ແມ່ນທີ່ສຳລັບນັ່ງຂັດສະມາທິ ຕ້ອງອາບັຕິທຸກກະຕະ
ບອກແລ້ວ ພິກສຸນີສຳຄັນວ່າຍັງບໍ່ໄດ້ບອກ ຕ້ອງອາບັຕິທຸກກະຕະ
ບອກແລ້ວ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ບອກແລ້ວ ພິກສຸນີສຳຄັນວ່າບອກແລ້ວ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໕໘] ໑. ພິກສຸນີໄປໂດຍບອກແລ້ວ
໒. ພິກສຸນີຜູ້ນັ່ງເທິງອາສົນະທີ່ເຄື່ອນຍ້າຍບໍ່ໄດ້
໓. ພິກສຸນີຜູ້ເປັນໄຂ້
໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໕. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໔. ອັນທູກາຣວັຄ ສິກຂາບົດທີ ໖ ນິທານວັຕຖຸ

### ໔. ອັນທູກາຣວັຄ

### ສິກຂາບົດທີ ໖

ວ່າດ້ວຍການນັ່ງນອນເທິງອາສນະໂດຍບໍ່ບອກເຈົ້າຂອງ

### ເຣື່ອງພິກສຸນີຖຸລລະນັນທາ

[໗໕໙] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາເຂົ້າໄປສູ່ຕະກູນທັງຫລາຍພາຍຫລັງສັນພັຕຕາຫາຣ ນັ່ງແດ່ ນອນແດ່ເທິງອາສນະໂດຍບໍ່ບອກເຈົ້າຂອງ(ບ້ານ) ຄົນໃນບ້ານເກງໃຈພິກສຸນີຖຸລລະນັນທາ ຈຶ່ງບໍ່ກ້ານັ່ງຫລືນອນເທິງອາສນະ ຄົນທັງຫລາຍພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງເຂົ້າໄປສູ່ຕະກູນພາຍຫລັງສັນພັຕຕາຫາຣ ນັ່ງແດ່ ນອນແດ່ເທິງອາສນະ ໂດຍບໍ່ບອກເຈົ້າຂອງ(ບ້ານ)ລະ" ພິກສຸນີທັງຫລາຍໄດ້ຍິນຄົນພວກນັ້ນຕໍາຫນິ ປະນາມໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງເຂົ້າໄປສູ່ຕະກູນພາຍຫລັງສັນພັຕຕາຫາຣ ນັ່ງແດ່ ນອນແດ່ເທິງອາສນະໂດຍບໍ່ບອກເຈົ້າຂອງ(ບ້ານ)ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນໍາເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາເຂົ້າໄປສູ່ຕະກູນພາຍຫລັງສັນພັຕຕາຫາຣ ນັ່ງແດ່ ນອນແດ່ເທິງອາສນະໂດຍບໍ່ບອກເຈົ້າຂອງ(ບ້ານ) ຈິງຫລື" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງເຂົ້າໄປສູ່ຕະກູນພາຍຫລັງສັນພັຕຕາຫາຣ ນັ່ງແດ່ ນອນ

ແດ່ເທິງອາສນະໂດຍບໍ່ບອກເຈົ້າຂອງ(ບ້ານ)ລະ ພິກສຸທັງຫລາຍກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໔. ອັນທະກາຣວັຄ ສິກຂາບົດທີ ໖ ສິກຂາບົທວິພັງຄ໌**

**ພຣະບັນຍັດ**

[໗໖໐] ກໍພິກສຸນີໃດເຂົ້າໄປສູ່ຕະກູນພາຍຫລັງສັນພັຕຕາຫາຣ ນັ່ງຫລືນອນເທິງອາສນະ໑ໂດຍບໍ່ບອກເຈົ້າຂອງບ້ານ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໖໑] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ພາຍຫລັງສັນພັຕຕາຫາຣ ໄດ້ແກ່ ຕັ້ງແຕ່ເວລາທ່ຽງວັນໄປຈົນເຖິງດວງອາທິຕຍ໌ຕົກ

ທີ່ຊື່ວ່າ ຕະກູນ ຫມາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກສັຕຣິຍ໌ ຕະກູນພຣາມນ໌ ຕະກູນແພສຍ໌ ຕະກູນສູທຣ

ຄຳວ່າ ເຂົ້າໄປ ຄື ໄປໃນຕະກູນນັ້ນ

ຄຳວ່າ ໂດຍບໍ່ບອກເຈົ້າຂອງບ້ານ ຄື ບໍ່ຂໍອນຸຍາຕເຈົ້າຂອງບ້ານຜູ້ຮັບຜິດຊອບໃນຕະກູນນັ້ນ

ທີ່ຊື່ວ່າ ອາສນະ ພຣະຜູ້ມີພຣະພາກຕຣັສຫມາຍເຖິງທີ່ສຳລັບນັ່ງຂັດສມາທິ

ຄຳວ່າ ນັ່ງ ຄື ນັ່ງເທິງອາສນະນັ້ນ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ຫລືນອນ ຄື ນອນເທິງອາສນະນັ້ນ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ນັ່ງແລ້ວໄປ ຕ້ອງອາບັຕິປາຈິຕຕີຍ໌ຕົວດຽວ ບໍ່ນັ່ງແຕ່ນອນ ຕ້ອງອາບັຕິປາຈິຕຕີຍ໌ຕົວດຽວ ນັ່ງ

ແລ້ວນອນ ຕ້ອງອາບັຕິປາຈິຕຕີຍ໌ ໔ ຕົວ (ວິ. ອ. ໔/໗໒໐/໔ລ໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໔. ອັນທຸກາຣວັຄ ສິກຂາບົດທີ ໒ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໒໔] ຍັງບໍ່ໄດ້ບອກ ພິກສຸນີສຳຄັນວ່າຍັງບໍ່ໄດ້ບອກ ນັ່ງຫລືນອນເທິງອາສນະຕ້ອງອາບັຕິປາຈິຕຕີຍ໌

ຍັງບໍ່ໄດ້ບອກ ພິກສຸນີບໍ່ແນ່ໃຈ ນັ່ງຫລືນອນເທິງອາສນະ ຕ້ອງອາບັຕິປາຈິຕຕີຍ໌

ຍັງບໍ່ໄດ້ບອກ ພິກສຸນີສຳຄັນວ່າບອກແລ້ວ ນັ່ງຫລືນອນເທິງອາສນະ ຕ້ອງອາບັຕິປາຈິຕຕີຍ໌

**ຕິກທຸກກະຕະ**

ບໍ່ແມ່ນທີ່ສຳລັບນັ່ງຂັດສມາທິ ຕ້ອງອາບັຕິທຸກກະຕະ

ບອກແລ້ວ ພິກສຸນີສຳຄັນວ່າຍັງບໍ່ໄດ້ບອກ ຕ້ອງອາບັຕິທຸກກະຕະ

ບອກແລ້ວ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ບອກແລ້ວ ພິກສຸນີສຳຄັນວ່າບອກແລ້ວ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໒໕] ໑. ພິກສຸນີບອກແລ້ວນັ່ງຫລືນອນເທິງອາສນະ

໒. ພິກສຸນີນັ່ງຫລືນອນເທິງອາສນະທີ່ເຂົາປູໄວ້ປະຈຳ

໓. ພິກສຸນີຜູ້ເປັນໄຂ້

໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໕. ພິກສຸນີວິກົລຈິຕ

໒. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ຝ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ອັນທກາຣວັຄ ສິກຂາບົດທີ ໆ ນິທານວັຕຖຸ

## ໔. ອັນທກາຣວັຄ

**ສິກຂາບົດທີ ໆ**
ວ່າດ້ວຍການປູລາດໂດຍບໍ່ບອກ

**ເຣື່ອງພິກສຸນີຫລາຍຣູບ**
[ໆຝ໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຫລາຍຣູບຍ່າງທາງໄປກຸງສາວັຕຖີ ແຄວັນໂກສົລເຖິງຫມູ່ບ້ານແຫ່ງນຶ່ງໃນເວລາແລງ ເຂົ້າໄປສູ່ຕະກູນພຣາມນ໌ຕະກູນນຶ່ງຂໍໂອກາສ ລຳດັບນັ້ນພຣາຫມນີໄດ້ກ່າວກັບພິກສຸນີເຫລົ່ານັ້ນ ດັ່ງນີ້ວ່າ “ແມ່ເຈົ້າທັງຫລາຍ ໂປຣດຖ້າຈົນກວ່າພຣາມນ໌ຈະມາ” ພວກພິກສຸນີກ່າວວ່າ “ພວກເຮົາຈະຖ້າຈົນກວ່າພຣາມນ໌ຈະມາ” ໄດ້ປູທີ່ນອນ ບາງພວກນັ່ງບາງພວກນອນ ຄັນໃນຕອນກາງຄືນ ພຣາມນ໌ກັບມາພົບເຫັນໄດ້ກ່າວກັບພຣາຫມນີ ດັ່ງນີ້ວ່າ “ສະຕຣີເຫລົ່ານີ້ເປັນໃຜ” ພຣາຫມນີກ່າວວ່າ “ພໍ່ເຈົ້າ ສະຕຣີເຫລົ່ານີ້ເປັນພິກສຸນີ” ພຣາມນ໌ກ່າວວ່າ “ພວກທ່ານຈົ່ງຂັບໄລ່ຍິງຊົ່ວຫົວໂລ້ນພວກນີ້ອອກໄປ” ແລ້ວໃຫ້ຂັບໄລ່ອອກຈາກເຮືອນ ຄັນພິກສຸນີເຫລົ່ານັ້ນໄປເຖິງກຸງສາວັຕຖີ ເລົ່າເຣື່ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີຈຶ່ງເຂົ້າໄປສູ່ຕະກູນໃນເວລາວິກາລ ປູຫລືໃຊ້ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງບ້ານແລ້ວນັ່ງແດ່ ນອນແດ່ລະ” ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**
ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີເຂົ້າໄປສູ່ຕະກູນໃນເວລາວິກາລ ປູຫລືໃຊ້

ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງບ້ານແລ້ວນັ່ງແດ່ ນອນແດ່ ແມ່ນແທ້ບໍ" ພິກສຸນີທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຈຶ່ງຕຳຫນິວ່າ"ຯລຯ ພິກສຸນີທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງເຂົ້າໄປສູ່ຕະກູນໃນເວລາວິກາລ ປູຫລືໃຊ້ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງບ້ານແລ້ວນັ່ງແດ່ ນອນແດ່ລະ ພິກສຸນີທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໕໕] ກໍພິກສຸນີໃດເຂົ້າໄປສູ່ຕະກູນໃນເວລາວິກາລ ປູຫລືໃຊ້ໃຫ້ປູທີ່ນອນໂດຍບໍ່ບອກເຈົ້າຂອງບ້ານແລ້ວນັ່ງຫລືນອນ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໕໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ເວລາວິກາລ ຄື ຕັ້ງແຕ່ເວລາດວງອາທິຕຍ໌ຕກໄປຈົນເຖິງອຣຸນຂຶ້ນ
ທີ່ຊື່ວ່າ ຕະກູນ ຫມາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກສັຕຣິຍ໌ ຕະກູນພຣາມນ໌ ຕະກູນແພສຍ໌ ຕະກູນສູທຣ
ຄຳວ່າ ເຂົ້າໄປ ຄື ໄປໃນຕະກູນນັ້ນ
ຄຳວ່າ ໂດຍບໍ່ບອກເຈົ້າຂອງບ້ານ ຄື ບໍ່ຂໍອນຸຍາຕເຈົ້າຂອງບ້ານຜູ້ຮັບຜິດຊອບໃນຕະກູນນັ້ນ
ທີ່ຊື່ວ່າ ທີ່ນອນ ໂດຍທີ່ສຸດແມ່ນເຄື່ອງປູລາດທີ່ເຮັດດ້ວຍໃບໄມ້
ຄຳວ່າ ປູ ຄື ປູເອງ
ຄຳວ່າ ໃຊ້ໃຫ້ປູ ຄື ໃຊ້ຜູ້ອື່ນໃຫ້ປູ
ຄຳວ່າ ນັ່ງ ຄື ນັ່ງເທິງທີ່ນອນນັ້ນ ຕ້ອງອາບັຕິປາຈິຕຕີຍ໌
ຄຳວ່າ ຫລືນອນ ຄື ນອນເທິງທີ່ນອນນັ້ນ ຕ້ອງອາບັຕິປາຈິຕຕີຍ໌

**ບົທພຼາຊນີຍ໌**

[ຈຼຸຝົກໆ] ຍັງບໍ່ໄດ້ບອກ ພິກສຸນີສໍາຄັນວ່າຍັງບໍ່ໄດ້ບອກ ປູຫລືໃຊ້ຜູ້ອື່ນໃຫ້ປູທີ່ນອນແລ້ວນັ່ງຫລືນອນ ຕ້ອງອາບັຕິປາຈິຕຕີຍ໌

ຍັງບໍ່ໄດ້ບອກ ພິກສຸນີບໍ່ແນ່ໃຈ ປູຫລືໃຊ້ຜູ້ອື່ນໃຫ້ປູທີ່ນອນແລ້ວນັ່ງຫລືນອນ ຕ້ອງອາບັຕິປາຈິຕຕີຍ໌

ຍັງບໍ່ໄດ້ບອກ ພິກສຸນີສໍາຄັນວ່າບອກແລ້ວ ປູຫລືໃຊ້ຜູ້ອື່ນໃຫ້ປູທີ່ນອນແລ້ວນັ່ງຫລືນອນ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກຸກກະຕະ**

ບອກແລ້ວ ພິກສຸນີສໍາຄັນວ່າຍັງບໍ່ໄດ້ບອກ ຕ້ອງອາບັຕິທຸກກະຕະ

ບອກແລ້ວ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ບອກແລ້ວ ພິກສຸນີສໍາຄັນວ່າບອກແລ້ວ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[ຈຼຸຝົກຼ] ໑. ພິກສຸນີບອກເຈົ້າຂອງ ປູເອງຫລືໃຊ້ຜູ້ອື່ນໃຫ້ປູທີ່ນອນ ນັ່ງຫລືນອນ

໒. ພິກສຸນີຜູ້ເປັນໄຂ້

໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໑. ອັນທກາຣວັຄ ສິກຂາບົດທີ ໘ ນິທານວັຕຖຸ**

**໘. ອັນທກາຣວັຄ**

## ສິກຂາບົດທີ ໗

ວ່າດ້ວຍການໃຫ້ຜູ້ອື່ນໂພນທະນາ

## ເລື້ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ

[໗໘໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີອຸປັຕຖາກພຣະພັທທກາປິລານີໂດຍເຄົາຣົພ ພຣະພັທທກາປິລານີໄດ້ກ່າວກັບພິກສຸນີທັງຫລາຍດັ່ງນີ້ວ່າ "ແມ່ເຈົ້າ ພິກສຸນີນີ້ອຸປັຕຖາກເຮົາໂດຍເຄົາຣົພ ເຮົາຈະໃຫ້ຈີວອນທ່ານ" ແຕ່ພິກສຸນີນັ້ນເພາະຄວາມເຂົ້າໃຈຜິດ ເພາະໃຄ່ຄວນຜິດ ໃຫ້ຜູ້ອື່ນໂພນທະນາວ່າ "ແມ່ເຈົ້າ ເຂົາວ່າຂະນ້ອຍບໍ່ໄດ້ອຸປັຕຖາກແມ່ເຈົ້າໂດຍເຄົາຣົພ ແມ່ເຈົ້າຈະບໍ່ໃຫ້ຈີວອນແກ່ຂະນ້ອຍ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງໃຫ້ຜູ້ອື່ນ ໂພນທະນາເພາະເຂົ້າໃຈຜິດ ເພາະໃຄ່ຄວນຜິດລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີໃຫ້ຜູ້ອື່ນໂພນທະນາ ເພາະເຂົ້າໃຈຜິດ ເພາະໃຄ່ຄວນຜິດ ແມ່ນແທ້ບໍພິກສຸທັງຫລາຍທູລຮັບວ່າ "ຈິງ ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງໃຫ້ຜູ້ອື່ນໂພນທະນາເພາະເຂົ້າໃຈຜິດ ເພາະໃຄ່ຄວນຜິດລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໔. ອັນທຸກາຣວັຄ ສິກຂາບົດທີ ໗ ບົທພາຊນີຍ໌**

**ພຣະບັນຍັດ**

[໗໗໐] ກໍພິກສຸນີໃດເພາະເຂົ້າໃຈຜິດ ເພາະໃຄ່ຄວນຜິດ ໃຫ້ຜູ້ອື່ນໂພນທະນາ ຕ້ອງອາບັຕິ
ປາຈິຕຕີຍ໌

ເຣື້ອງພິກສຸນີອັນເຕວາສີນີຂອງພຣະພັທທກາປິລານີ ຈົບ

**ສິກຂາບົທວິພັງຄ໌**

[໗໗໑] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌
ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ເພາະເຂົ້າໃຈຜິດ ຄື ເພາະເຂົ້າໃຈເປັນຢ່າງອື່ນ
ຄຳວ່າ ເພາະໃຄ່ຄວນຜິດ ຄື ເພາະໃຄ່ຄວນເປັນຢ່າງອື່ນ
ຄຳວ່າ ຜູ້ອື່ນ ໄດ້ແກ່ ໃຫ້ອຸປສັມບັນໂພນທະນາ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໗໔] ອຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ໃຫ້ໂພນທະນາ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ພິກສຸນີບໍ່ແນ່ໃຈ ໃຫ້ໂພນທະນາ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ໃຫ້ໂພນທະນາ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໔. ອັນທກາຣວັຄ ສິກຂາບົດທີ ໗ ອນາປັຕຕິວາຣ**

**ທຸກກະຕະ**

ພິກສຸນີໃຫ້ອນຸປສັມບັນໂພນທະນາ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໗໓] ໑. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ອັນຫກາຣວັຄ ສິກຂາບົດທີ ໘ ນິທານວັຕຖຸ**

**໔. ອັນຫກາຣວັຄ**

**ສິກຂາບົດທີ ໘**
ວ່າດ້ວຍການສາປແຊ່ງຕົນເອງແລະຜູ້ອື່ນ

**ເຣື້ອງພິກສຸນີຈັນຫກາລີ**
[໗໗໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບໍ່ເຫັນສິ່ງຂອງຂອງຕົນໄດ້ກ່າວກັບພິກສຸນີ ຈັນຫກາລີດັ່ງນີ້ວ່າ "ແມ່ເຈົ້າ ທ່ານເຫັນສິ່ງຂອງຂອງພວກເຮົາ ແດ່ບໍ່" ພິກສຸນີຈັນຫກາລີຕໍາຫນິ ປະນາມ ໂພນທະນາວ່າ "ຂະນ້ອຍນີ້ແຫລະທີ່ເປັນລັກ ຂະນ້ອຍນີ້ແຫລະບໍ່ມີຄວາມລະອາຍ ພວກແມ່ເຈົ້າທີ່ບໍ່ເຫັນສິ່ງຂອງຂອງຕົນ ຕ່າງພາກັນກ່າວກັບຂະນ້ອຍຢ່າງນີ້ວ່າ 'ເຫັນສິ່ງຂອງຂອງພວກເຮົາແດ່ບໍ່' ແມ່ເຈົ້າ ຖ້າຂະນ້ອຍເອົາສິ່ງຂອງຂອງພວກທ່ານໄປ ຂະນ້ອຍກໍຈົ່ງເປັນຜູ້ບໍ່ແມ່ນສະມະນະຍິງ ຈົ່ງເຄື່ອນຈາກພຣົມຈັນຍ໌ ຈົ່ງບັງເກີດໃນນະຣົກ ສ່ວນຜູ້ທີ່ກ່າວຫາຂະນ້ອຍດ້ວຍເຣື່ອງທີ່ບໍ່ຈິງ ກໍຈົ່ງບໍ່ເປັນສະມະນະຍິງ ຈົ່ງເຄື່ອນຈາກພຣົມຈັນຍ໌ ຈົ່ງບັງເກີດໃນນະຣົກ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຈັນຫກາລີ ຈຶ່ງສາປແຊ່ງຕົນເອງແດ່ ຜູ້ອື່ນແດ່ ດ້ວຍນະຣົກແດ່ ດ້ວຍພຣົມຈັນຍ໌໑ ແດ່ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຈັນທກາລີສາປແຊ່ງຕົນເອງ

**ໝາຍເຫດ :**

໑ ສາປແຊ່ງດ້ວຍນະຣົກດ້ວຍພຣົມຈັນຍ໌ໃນທີ່ນີ້ ຄືດ່າໂດຍນັຍເປັນຕົ້ນວ່າ ຂໍໃຫ້ຂະນ້ອຍຈົງບັງເກີດໃນນະຣົກອເວຈີ ຫລືຂໍໃຫ້ຜູ້ອື່ນຈົງບັງເກີດໃນນະຣົກອເວຈີ ຂໍໃຫ້ຂະນ້ອຍເປັນຄຣືຫັສຖ໌ ກັບໄປນຸ່ງຜ້າຂາວ ເປັນປຣິພາຊິກາ ຫລືຂໍໃຫ້ຜູ້ອື່ນຈົ່ງເປັນຢ່າງທີ່ຂະນ້ອຍເປັນນີ້ ຄືສາປແຊ່ງຕົນແລະຜູ້ອື່ນໃຫ້ຕົກນະຣົກ ສາປແຊ່ງຕົນແລະຜູ້ອື່ນໃຫ້ເຄື່ອນຈາກພຣົມຈັນຍ໌ (ວິ. ອ. ໔/໗໗໕/໔ລ໗)

ແດ່ ຜູ້ອື່ນແດ່ ດ້ວຍນະຣົກແດ່ ດ້ວຍພຣົມຈັນຍ໌ແດ່ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈັນທກາລີຈຶ່ງສາປແຊ່ງຕົນເອງແດ່ ຜູ້ອື່ນແດ່ ດ້ວຍນະຣົກແດ່ ດ້ວຍພຣົມຈັນຍ໌ແດ່ລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໕] ກໍພິກສຸນີໃດສາປແຊ່ງຕົນເອງຫລືຜູ້ອື່ນດ້ວຍນະຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຈັນທກາລີ ຈົບ

**ສິກຂາບົທວິພັງຄ໌**

[໗໗໖] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ຕົນເອງ ຄື ສະເພາະຕົວເອງ
ຄຳວ່າ ຜູ້ອື່ນ ໄດ້ແກ່ ອຸປສັມບັນ ພິກສຸນີສາປແຊ່ງ(ອຸປສັມບັນ)ດ້ວຍນະຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໗໗] ອຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ສາປແຊ່ງດ້ວຍນະຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ພິກສຸນີບໍ່ແນ່ໃຈ ສາປແຊ່ງດ້ວຍນະຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ສາປແຊ່ງດ້ວຍນະຣົກຫລືດ້ວຍພຣົມຈັນຍ໌ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກະຕະ**

ພິກສຸນີສາປແຊ່ງດ້ວຍ(ຄຳທີ່ບົ່ງເຖິງ)ກຳເນີດສັຕວ໌ເດັຽຣະສານ ເປດວິສັຍ ຫລືຄົນໄຊຄຮ້າຍ໑ ຕ້ອງອາບັຕິທຸກກະຕະ
ພິກສຸນີສາປແຊ່ງອນຸປສັມບັນ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໗໘] ໑. ພິກສຸນີມຸ່ງອັຕຖະ໔
໒. ພິກສຸນີມຸ່ງທັມມ໓
໓. ພິກສຸນີມຸ່ງສັ່ງສອນ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໙ ຈົບ

**ໝາຍເຫດ :**

໑ ຄືສາບແຊ່ງໃຫ້ເປັນຄົນມີຮູບຮ່າງແປກປະຫລາດວ່າ "ຂໍໃຫ້ເຮົາຕາບອດ ເປັນງ່ອຍ ຫລືໃຫ້ຄົນອື່ນເປັນຢ່າງນີ້ໆ" (ກງ໌ຂາ. ຕີກາ ໔ລກ)

໔ "ນຸ່ງອັນຖະ" ໃນທີ່ນີ້ໝາຍເຖິງກ່າວອັນຖະກຖາ (ວິ. ອ. ໒/໗໗໗/໔ລ໗)

໖ "ນຸ່ງຫົ່ມ" ໃນທີ່ນີ້ໝາຍເຖິງບອກບາລີ (ວິ. ອ. ໒/໗໗໗/໔ລ໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ອັນທກາຣວັຄ ສິກຂາບົດທີ ໑໐ ນິທານວັຕຖຸ**

**໔. ອັນທກາຣວັຄ**

**ສິກຂາບົດທີ ໑໐**

ວ່າດ້ວຍການຮ້ອງໄຫ້ທຸບຕີຕົນເອງ

**ເຣື້ອງພິກສຸນີຈັນທກາລີ**

[໗໗ລ] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຈັນທກາລີຜິດຖຽງກັບພິກສຸນີທັງຫລາຍແລ້ວຮ້ອງໄຫ້ທຸບຕີຕົນເອງ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຈັນທກາລີຈຶ່ງຮ້ອງໄຫ້ທຸບຕີຕົນເອງລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຈັນທກາລີຮ້ອງໄຫ້ທຸບຕີຕົນເອງ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈັນທກາລີຈຶ່ງຮ້ອງໄຫ້ທຸບຕີຕົນເອງລະ ພິກສຸທັງຫລາຍ

ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂື້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍ ຍົກສິກຂາບົດນີ້ຂື້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໗໐] ກໍພິກສຸນີໃດຮ້ອງໄຫ້ທຸບຕີຕົນເອງ ຕ້ອງອາບັດປາຈິດຕີຍ໌

ເຣື້ອງພິກສຸນີຈັນທກາລີ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໔. ອັນທກາຣວັຄ ສິກຂາບົດທີ ໑໐ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໗໗໑] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ຕົນເອງ ຄື ສະເພາະຕົນເອງ
ພິກສຸນີຮ້ອງໄຫ້ທຸບຕີຕົນເອງ ຕ້ອງອາບັດປາຈິດຕີຍ໌ ທຸບຕີ(ຕົນເອງ)ແຕ່ບໍ່ຮ້ອງໄຫ້ ຕ້ອງອາບັດທຸກກະຕະ ຮ້ອງໄຫ້ແຕ່ບໍ່ທຸບຕີ(ຕົນເອງ) ຕ້ອງອາບັດທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື
[໗໗໔] ໑. ພິກສຸນີຖືກຄວາມເສື່ອມຍາຕ ເສື່ອມໂພຄະຫລືໂຣຄຣຸມເຮົ້າ ຮ້ອງໄຫ້ແຕ່ບໍ່ທຸບຕີຕົນເອງ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ

ອັນຫຼກາຣວັຄທີ ໔ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ຝ. ນັຄຄວັຄ ສິກຂາບົດທີ ໑ ນິທານວັຕຖຸ

### ຝ. ນັຄຄວັຄ

ຫມວດວ່າດ້ວຍກາຣເປືອຍກາຍ

### ສິກຂາບົດທີ ໑

ວ່າດ້ວຍກາຣເປືອຍກາຍອາບນ້ຳ

### ເຣື້ອງພິກສຸນີຫລາຍຮູບ

[໗໗໙] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຫລາຍຮູບເປືອຍກາຍອາບນ້ຳໃນແມ່ນ້ຳອຈິຣວດີ ທ່າ ດຽວກັບຍິງແພສຍາ ພວກຍິງແພສຍາເຍີ້ຍຫຍັນພິກສຸນີເຫລົ່ານັ້ນວ່າ "ແມ່ເຈົ້າທັງຫລາຍ ພວກ ທ່ານຍັງເປັນສາວ ຈະປະພຶດພຣົມຈັນຍ໌ໄປເປັນຫຍັງກັນ ຫຼັມດາມະນຸສຍ໌ຄວຣບໍຣິໂພຄກາມ ບໍ່ແມ່ນ ບໍ ຕໍ່ເມື່ອຊຣາພວກທ່ານຈຶ່ງຄ່ອຍປະພຶດພຣົມຈັນຍ໌ ເມື່ອເປັນຢ່າງນີ້ ຊື່ວ່າໄດ້ຈັບສວຍເອົາປໂຍດ ທັງສອງແລ້ວ" ພວກພິກສຸນີຖືກພວກຍິງແພສຍາເຍີ້ຍຫຍັນຕ່າງເກີ້ເຂີນ ຄັນກັບໄປສຳນັກແລ້ວ ຈຶ່ງບອກເຣື່ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ພວກພິກສຸນີໄດ້ບອກເຣື່ອງນີ້ໃຫ້ພິກສຸທັງຫລາຍຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຊົງສະແດງທັມມີກຖາເພາະເຣື້ອງນີ້ເປັນຕົ້ນເຫຕຸ ຣັບສັ່ງກັບພິກສຸທັງ ຫລາຍວ່າ "ພິກສຸທັງຫລາຍ ເພາະເຫຕຸນັ້ນ ເຮົາຈະບັນຍັດສິກຂາບົທແກ່ພິກສຸນີທັງຫລາຍ ໂດຍ ອາສັຍອຳນາຈປໂຍດ ໑໐ ປະກາຣ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງຂ໌

ຯລຯ

໑໐. ເພື່ອເອື້ອເຟື້ອວິນັຍ໑

ແລ້ວຈຶ່ງຣັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ ດູຄວາມພິສູດາຣຂໍ້ ໓໕໓ ໜ້າ ໔-໕ ໃນເຫລັ້ມນີ້

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໓. ນັຄຄວັຄ ສິກຂາບົດທີ ໑ ອນາປັຕຕິວາຣ

### ພຣະບັນຍັດ

[໗໗໔] ກໍພິກສຸນີໃດເປືອຍກາຍອາບນ້ຳ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

### ສິກຂາບົທວິພັງຄ໌

[໗໗໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ເປືອຍກາຍອາບນ້ຳ ຄື ບໍ່ນຸ່ງຜ້າຫລືບໍ່ຫົ່ມຜ້າອາບນ້ຳ ຕ້ອງອາບັຕິທຸກກະຕະໃນຂນະທີ່ອາບ ອາບເສັດແລ້ວ ຕ້ອງອາບັຕິປາຈິຕຕີຍ໌

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗໗໖] ໑. ພິກສຸນີຖືກໂຈຣລັກຈີວອນຫລືຈີວອນຫາຍ
໒. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໓. ນັຄຄວັຄ ສິກຂາບົດທີ ໒ ນິທານວັຕຖຸ

## ໓. ນັຄຄວັຄ

### ສິກຂາບົດທີ ໔

ວ່າດ້ວຍການໃຊ້ຜ້າອາບນ້ຳບໍ່ໄດ້ຂນາດ

### ເຣື້ອງພິກສຸນີສັພພັຄຄີຍ໌

[໗໗໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກຊົງອນຸຍາຕໃຫ້ພິກສຸນີໃຊ້ຜ້າອາບນ້ຳ ພວກພິກສຸນີສັພພັຄຄີຍ໌ຄິດວ່າ "ພຣະຜູ້ມີພຣະພາກຊົງອນຸຍາຕຜ້າອາບນ້ຳແລ້ວ" ພາກັນໃຊ້ຜ້າອາບນ້ຳບໍ່ໄດ້ ຂນາດ ຍ່າງຫຽວຍ້ອຍຂ້າງຫນ້າແດ່ ຍ້ອຍຂ້າງຫລັງແດ່ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໃຊ້ຜ້າອາບນ້ຳບໍ່ໄດ້ຂນາດລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ໃຊ້ຜ້າອາບນ້ຳບໍ່ໄດ້ຂນາດ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໃຊ້ຜ້າອາບນ້ຳບໍ່ໄດ້ຂນາດລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໓. ນັຄຄວັຄ ສິກຂາບົດທີ ໔ ບົທພາຊນີຍ໌

### ພຣະບັນຍັດ

[໗໗໗] ກໍພິກສຸນີຜູ້ຈະໃຫ້ທຳຜ້າອາບນ້ຳ ຄວນເຮັດໃຫ້ໄດ້ຂນາດ ຂນາດໃນຂໍ້ນັ້ນຄື ຍາວ ໔ ຄືບ ກວ້າງ ໒ ຄືບ ໂດຍຄືບສຸຄຕ໑ ເຮັດໃຫ້ເກີນຂນາດນັ້ນ ຕ້ອງອາບັຕິປາຈິຕຕີຍ໌ທີ່ຊື່ວ່າເສທນກະ໔

ເຣື່ອງພິກສຸນີສັພພັຄຄີຍ໌ ຈົບ

**ສິກຂາບົທວິພັງຄ໌**

[໗໘໙] ທີ່ຊື່ວ່າ ຜ້າອາບນ້ຳ ໄດ້ແກ່ ຜ້າທີ່ໃຊ້ນຸ່ງອາບນ້ຳ

ຄຳວ່າ ຜູ້ຈະໃຫ້ທຳ ອະທິບາຍວ່າ ພິກສຸນີທຳເອງຫລືໃຊ້ຜູ້ອື່ນໃຫ້ທຳ ຄວນເຮັດໃຫ້ໄດ້ຂນາດ ຂນາດໃນຂໍ້ນັ້ນ ຄື ຍາວ ໔ ຄືບ ກວ້າງ ໒ ຄືບ ໂດຍຄືບສຸຄຕ ພິກສຸນີທຳເອງຫລືໃຊ້ຜູ້ອື່ນໃຫ້ທຳເກີນຂນາດນັ້ນ ຕ້ອງອາບັຕິທຸກກະຕະໃນຂນະທີ່ທຳ ຕ້ອງອາບັຕິປາຈິຕຕີຍ໌ ເພາະໄດ້ມາ ຕ້ອງຕັດຂອງນັ້ນເສັຽກ່ອນແລ້ວສະແດງອາບັຕິ

**ບົທພາຊນີຍ໌**

**ປາຈິຕຕີຍ໌**

[໗໙໐] ພິກສຸນີທຳຜ້າອາບນ້ຳທີ່ຕົນທຳຄ້າງໄວ້ຕໍ່ຈົນສຳເຣັຈດ້ວຍຕົນເອງ ຕ້ອງອາບັຕິປາຈິຕຕີຍ໌

ພິກສຸນີໃຊ້ຜູ້ອື່ນໃຫ້ທຳຜ້າອາບນ້ຳທີ່ຕົນທຳຄ້າງໄວ້ຕໍ່ຈົນສຳເຣັຈ ຕ້ອງອາບັຕິປາຈິຕຕີຍ໌

ພິກສຸນີທຳຜ້າອາບນ້ຳທີ່ຜູ້ອື່ນທຳຄ້າງໄວ້ຕໍ່ຈົນສຳເຣັຈດ້ວຍຕົນເອງ ຕ້ອງອາບັຕິປາຈິຕຕີຍ໌

ພິກສຸນີໃຊ້ຜູ້ອື່ນໃຫ້ທຳຜ້າອາບນ້ຳທີ່ຜູ້ອື່ນທຳຄ້າງໄວ້ຕໍ່ຈົນສຳເຣັຈ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ຊື່ອມາຕຣາວັດ ໑ ຄືບສຸຄຕ ເທົ່າກັບ ໓ ຄືບ ຂອງຄົນສັນຖານປານກາງ ເທົ່າກັບ ໑ ສອກເຄິ່ງ ໂດຍສອກຊ່າງໄມ້ ແຕ່ໃນປັຈຈຸບັນໃຫ້ຖືຕາມໄມ້ເມຕຣ ຄືເທົ່າກັບ ໒໕ ເຊນຕິເມຕຣ (ວິ. ອ ໒/ ໓໔໗-໓໔໘/໓໑)

໒ ຄຳວ່າ "ເສທນກະ" ເປັນຊື່ສະເພາະຂອງສິກຂາບົທນີ້ ຫມາຍເຖິງອາບັຕິທີ່ເມື່ອຕ້ອງເຂົ້າແລ້ວຈຳເປັນຕ້ອງຕັດຫລືແຫກຜ້າອາບນ້ຳທີ່ເກີນຂນາດອອກເສັຽກ່ອນຈຶ່ງຈະສາມາດສະແດງອາບັຕິຕກໄປໄດ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໓. ນັຄຄວັຄ ສິກຂາບົດທີ ໒ ອນາປັຕຕິວາຣ**

**ທຸກກຸກກະຕະ**
ພິກສຸນີທຳເອງຫລືໃຊ້ຜູ້ອື່ນໃຫ້ທຳເພື່ອປໂຍດແກ່ຜູ້ອື່ນ ຕ້ອງອາບັຕິທຸກກະຕະ
ພິກສຸນີໄດ້ຜ້າອາບນ້ຳທີ່ຜູ້ອື່ນທຳໄວ້ມາໃຊ້ສອຍ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໗໘໑] ໑. ພິກສຸນີທຳຜ້າອາບນ້ຳໄດ້ຂນາດ
໒. ພິກສຸນີທຳຜ້າອາບນ້ຳຫນ້ອຍກວ່າຂນາດ
໓. ພິກສຸນີໄດ້ຜ້າອາບນ້ຳທີ່ຜູ້ອື່ນທຳໄວ້ເກີນຂນາດມາຕັດໃຫ້ໄດ້ຂນາດແລ້ວໃຊ້ສອຍ
໔. ພິກສຸນີທຳເປັນເພດານ ຜ້າປູພື້ນ ຜ້າມ່ານ ຜ້າເປືອກເສື່ອຫລືຫມອນ
໕. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໓. ນັຄຄວັຄ ສິກຂາບົດທີ ໓ ນິທານວັຕຖຸ**

**໓. ນັຄຄວັຄ**

**ສິກຂາບົດທີ ໓**
ວ່າດ້ວຍການເລາະຈີວອນແລ້ວບໍ່ຍິບ

**ເຣື່ອງພິກສຸນີຖຸລລະນັນທາ**
[໗໘໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຮູບນຶ່ງທຳຈີວອນບໍ່ດີ ຍິບບໍ່ດີທັງທີ່ໃຊ້ຜ້າສຳລັບທຳຈີວອນຣາຄາແພງ ພິກສຸນີຖຸລລະນັນທາໄດ້ກ່າວກັບພິກສຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ຜ້າສຳລັບທຳຈີວອນຂອງທ່ານດີແມ່ນແທ້ແຕ່ກັບທຳຈີວອນບໍ່ດີ ຍິບບໍ່ດີ" ພິກສຸນີນັ້ນກ່າວວ່າ "ແມ່ເຈົ້າ ຂະນ້ອຍຈະເລາະອອກ ທ່ານຈະຍິບໃຫ້ຫລື" ພິກສຸນີຖຸລລະນັນທາກ່າວວ່າ "ແມ່ເຈົ້າ ຂະນ້ອຍຈະຍິບໃຫ້" ຄັນແລ້ວ ພິກສຸນີນັ້ນຈຶ່ງເລາະຈີວອນແລ້ວມອບໃຫ້ພິກສຸນີຖຸລລະນັນທາ ພິກສຸນີຖຸລລະນັນທາ ກ່າວວ່າ "ຂະ

ນ້ອຍຈະຍົບໃຫ້ ຂະນ້ອຍຈະຍົບໃຫ້" ແຕ່ບໍ່ຍົບໃຫ້ ທັງບໍ່ຂິນຂວາຍໃຊ້ຜູ້ອື່ນໃຫ້ຍົບ ພິກສຸນີນັ້ນຈຶ່ງບອກເຣື້ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງໃຫ້ເລາະຈີວອນຂອງພິກສຸນີແລ້ວບໍ່ຍົບໃຫ້ ທັງບໍ່ຂິນຂວາຍໃຊ້ຜູ້ອື່ນໃຫ້ຍົບລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາໃຫ້ເລາະຈີວອນຂອງພິກສຸນີແລ້ວບໍ່ຍົບໃຫ້ ທັງບໍ່ຂິນຂວາຍໃຊ້ຜູ້ອື່ນໃຫ້ຍົບ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງໃຫ້ເລາະຈີວອນຂອງພິກສຸນີແລ້ວບໍ່ຍົບໃຫ້ ທັງບໍ່ຂິນຂວາຍໃຊ້ຜູ້ອື່ນຍົບລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໗໘໓] ກໍພິກສຸນີໃດເລາະຫລືໃຊ້ໃຫ້ເລາະຈີວອນຂອງພິກສຸນີແລ້ວ ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ໑ ບໍ່ຍົບ ບໍ່ຂິນຂວາຍໃຊຜູ້ອື່ນໃຫ້ຍົບ ພົ້ນ ໔-໕ ວັນ໔ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໗໘໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ຄຳວ່າ ຂອງພິກສຸນີ ໄດ້ແກ່ ພິກສຸນີຮູບອື່ນ

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊນິດ ຢ່າງໃດຢ່າງນຶ່ງ

ຄໍາວ່າ ເລາະ ຄື ເລາະດ້ວຍຕົນເອງ
ຄໍາວ່າ ໃຊ້ໃຫ້ເລາະ ຄື ໃຊ້ຜູ້ອື່ນໃຫ້ເລາະ

**ໝາຍເຫດ :**

໑ ຫມາຍເຖິງບໍ່ຕົກຢູ່ໃນອັນຕຣາຍຢ່າງໃດຢ່າງນຶ່ງໃນອັນຕຣາຍ ໑໐ ຢ່າງ ຄື (໑) ພຣະຣາຊາສະເດັຈມາ (໒) ໂຈຣມາປຸ້ນ (໓) ໄຟໄຫມ້ (໔) ນໍ້າຫລາກມາ (໕) ຄົນມາມາກ (໖) ຜີເຂົ້າພິກສຸ (໗) ສັຕວ໌ຮ້າຍເຂົ້າມາໃນວັດ (໘) ງູເລືອເຂົ້າມາ (໙) ພິກສຸເປັນໂຣຄຮ້າຍ (໑໐) ເກີດອັນຕຣາຍແກ່ພຣມຫາຈຣຣຍ໌ ເຊັ່ນມີຄົນມາຈັບພິກສຸນີສຶກ (ວິ. ອ. ໒/໗໙໓-໔/໕໐໐, ດູ ວິ. ມ. ໔/໑໕໐/໑໕໙)

໔ "ພົ້ນ ໔-໕ ວັນ" ຫມາຍເຖິງລ່ວງເລີຍ ໕ ວັນ ນັບຈາກວັນທີ່ເລາະຈີວອນນັ້ນ (ສາຣຕຖ. ຕີກາ. ໓/໗໙໓/໑໕໓)

ຄໍາວ່າ ພາຍຫລັງ ພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ ຄື ເມື່ອບໍ່ມີອັນຕຣາຍ
ຄໍາວ່າ ບໍ່ຍິບ ຄື ບໍ່ຍິບດ້ວຍຕົນເອງ
ຄໍາວ່າ ບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຍິບ ຄື ບໍ່ສັ່ງຜູ້ອື່ນ
ຄໍາວ່າ ພົ້ນ ໔-໕ ວັນ ຄື ເກັບໄວ້ໄດ້ ໔-໕ ວັນ ພໍທອດທູຣະວ່າ "ເຮົາຈັກບໍ່ຍິບ ຈັກບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຍິບ" ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໗໙໕] ອຸປສັມບັນ ພິກສຸນີສໍາຄັນວ່າເປັນອຸປສັມບັນ ເລາະຫລືໃຊ້ໃຫ້ເລາະຈີວອນ ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ ບໍ່ຍິບ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ພິກສຸນີບໍ່ແນ່ໃຈ ເລາະຫລືໃຊ້ໃຫ້ເລາະຈີວອນ ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ ບໍ່ຍິບ ທັງບໍ່ຂວນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິປາຈິຕຕີຍ໌

ອຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ເລາະຫລືໃຊ້ໃຫ້ເລາະຈີວອນ ພາຍຫລັງພິກສຸນີນັ້ນ ຜູ້ບໍ່ມີອັນຕຣາຍ ບໍ່ຍິບ ທັງບໍ່ຂີນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິປາຈິຕຕິຍ໌

**ທຸກກະຕະ**

ພິກສຸນີເລາະຫລືໃຊ້ໃຫ້ເລາະບໍຣິຂາຣຢ່າງອື່ນ ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ ບໍ່ຍິບ ທັງບໍ່ຂີນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິທຸກກະຕະ

ພິກສຸນີເລາະຫລືໃຊ້ໃຫ້ເລາະຈີວອນຫລືບໍ່ຣິຂາຣຢ່າງອື່ນຂອງອນຸປສັມບັນ ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ ບໍ່ຍິບ ທັງບໍ່ຂີນຂວາຍໃຊ້ຜູ້ອື່ນໃຫ້ຍິບ ພົ້ນ ໔-໕ ວັນ ຕ້ອງອາບັຕິທຸກກະຕະ

ອນຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກະຕະ

ອນຸປສັມບັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ອນຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໗ລ໖] ໑. ພິກສຸນີບໍ່ຍິບໃນເມື່ອມີອັນຕຣາຍ

໒. ພິກສຸນີແສວງຫາແລ້ວບໍ່ໄດ້

໓. ພິກສຸນີກຳລັງທຳການຍິບ ພົ້ນ ໔-໕ ວັນ

໔. ພິກສຸນີຜູ້ເປັນໄຂ້

໕. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໖. ພິກສຸນີວິກົລຈິຕ

໗. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໓ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນ຺ຫ໌] ໓. ນັຄຄວັຄ ສິກຂາບົດທີ ໔ ນິທານວັຕຖຸ**

**໓. ນັຄຄວັຄ**

### ສິກຂາບົດທີ ໔

ວ່າດ້ວຍການບໍ່ຜັດປ່ຽນປ່ຽນສັງຂາຕິຕາມກຳຫນົດ

### ເຣື້ອງພິກສຸນີຫລາຍຮູບ

[໗໙໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍຝາກຈີວອນໄວ້ກັບພວກພິກສຸນີ ມີພຽງອຸຕຕຣາສິງຄ໌ກັບອັນຕຣວາສກຫລີກຈາຣິກໄປສູ່ຊົນບົທ ຈີວອນນັ້ນເກັບໄວ້ນານຈຶ່ງຂຶ້ນຣາ ພວກພິກສຸນີ(ທີ່ຮັບຝາກ)ຈຶ່ງນຳອອກຜຶ່ງແດດ ພິກສຸນີທັງຫລາຍໄດ້ກ່າວກັບພິກສຸນີ(ທີ່ຮັບຝາກ)ເຫລົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າທັງຫລາຍ ຈີວອນທີ່ຂຶ້ນຣາເຫລົ່ານີ້ເປັນຂອງໃຜ" ລຳດັບນັ້ນ ພວກພິກສຸນີ(ທີ່ຮັບຝາກ)ຈຶ່ງບອກເຣື້ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດພິກສຸນີທັງຫລາຍຈຶ່ງຝາກຈີວອນໄວ້ກັບພວກພິກສຸນີແລ້ວມີພຽງອຸຕຕຣາສິງຄ໌ກັບອັນຕຣວາສກຈາຣິກໄປສູ່ຊົນບົທລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີທັງຫລາຍຝາກຈີວອນໄວ້ກັບພວກພິກສຸນີແລ້ວມີພຽງອຸຕຕຣາສິງຄ໌ກັບອັນຕຣວາສກຈາຣິກໄປສູ່ຊົນບົທ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງຝາກຈີວອນໄວ້ກັບພິກສຸນີແລ້ວມີພຽງອຸຕຕຣາສິງຄ໌ກັບອັນຕຣວາສກຈາຣິກໄປສູ່ຊົນບົທລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໗໙໘] ກໍພິກສຸນີໃດໃຫ້ວາຣະຜັດປ່ຽນປ່ຽນສັງຂາຕິ໑ ທີ່ມີກຳຫນົດຣະຍະເວລາ ໕ ວັນລ່ວງເລີຍໄປ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໗ລລ] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ໃຫ້ອາຣະຜັດປ່ຽນປ່ຽນສັງຊາຕິທີ່ມີກຳຫນົດຣະຍະເວລາ ໕ ວັນລ່ວງເລີຍໄປອະທິບາຍວ່າ ບໍ່ນຸ່ງ ບໍ່ຫົ່ມ ບໍ່ຜຶ່ງຈີວອນ ໕ ຜືນ ສິ້ນວັນທີ ໕ ຄືໃຫ້ລ່ວງເລີຍໄປເປັນວັນທີ່ ໕ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ປາຈິຕຕີຍ໌**

[ລ໐໐] ລ່ວງເລີຍ ໕ ວັນ ພິກສຸນີສຳຄັນວ່າລ່ວງເລີຍ ໕ ວັນແລ້ວ ຕ້ອງອາບັຕິປາຈິຕຕີຍ໌

ລ່ວງເລີຍ ໕ ວັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິປາຈິຕຕີຍ໌

ລ່ວງເລີຍ ໕ ວັນ ພິກສຸນີສຳຄັນວ່າຍັງບໍ່ລ່ວງເລີຍ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ຄຳວ່າ "ສັງຊາຕິ" ໃນທີ່ນີ້ຫມາຍເຖິງຈີວອນ ໕ ຜືນຂອງພິກສຸນີ ຄື (໑) ສັງຊາຕິ (໒) ອຸຕຕຣາສົງຄ໌ (໓) ອັນຕຣວາສົກ (໔) ຜ້າອາບນ້ຳ (໕) ຜ້າຮັດຖັນ ພິກສຸນີຕ້ອງນຳຜ້າ ໕ ຜືນນີ້ອອກມາໃຊ້ສອຍຫລືຜຶ່ງແດດ ຫ້າມເກັບໄວ້ເກີນ ໕ ວັນ ຖ້າເກັບຜືນໃດຜືນນຶ່ງໄວ້ເກີນ ໕ ວັນ ຕ້ອງອາບັຕິປາຈິຕຕີຍ໌ : ເກັບໄວ້ ໑ ຜືນ ຕ້ອງອາບັຕິ ໑ ຕົວ ເກັບໄວ້ ໕ ຜືນ ຕ້ອງອາບັຕິ ໕ ຕົວ (ວິ. ອ. ໒ /໓ລ໗-ລ/໕໐໐-໕໐໑, ກງ໌ຂາ. ອ. ໓໗໕, ສາຣຕ໌ຖ. ຕີກາ ໓/໗ລ໗/໑໕໔)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໓. ນັຄຄວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

**ທຸກທຸກກະຕະ**

ຍັງບໍ່ລ່ວງເລີຍ ໕ ວັນ ພິກສຸນີສຳຄັນວ່າລ່ວງເລີຍແລ້ວ ຕ້ອງອາບັຕິທຸກກະຕະ

ຍັງບໍ່ລ່ວງເລີຍ ໕ ວັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ຍັງບໍ່ລ່ວງເລີຍ ໕ ວັນ ພິກສຸນີສໍາຄັນວ່າຍັງບໍ່ລ່ວງເລີຍ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໐໑] ໑. ພິກສຸນີ ນຸ່ງ ຫົ່ມຈີວອນ ໕ ຜືນ ຫລືນໍາອອກຜຶ່ງແດດໃນວັນທີ ໕

໒. ພິກສຸນີຜູ້ເປັນໄຂ້

໓. ພິກສຸນີຜູ້ມີເຫດຸຂັດຂ້ອງ໑

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ໝາຍເຫດ :**

໑ ຈີວອນມີຄ່າມາກ ຈຶ່ງບໍ່ສາມາດໃຊ້ສອຍໃນຄາວມີພັຍອັນເກີດຈາກໂຈຣຜູ້ຮ້າຍເປັນຕົ້ນ ໃນກໍຣະນີເຊັ່ນນີ້ ຊື່ວ່າ ມີເຫດຸຂັດຂ້ອງ (ວິ. ອ. ໒/໙໐໑/໕໐໑, ກງ໌ຂາ. ອ. ໓໗໕)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໓. ນັຄຄວັຄ ສິກຂາບົດທີ ໕ ນິທານວັຕຖຸ**

**໓. ນັຄຄວັຄ**

**ສິກຂາບົດທີ ໕**

ວ່າດ້ວຍການຫົ່ມຈີວອນສັບປ່ຽນກັນ

**ເຣື້ອງພິກສຸນີຮູບນຶ່ງ**

[໙໐໒] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຮູບນຶ່ງທ່ຽວບິນທບາຕແລ້ວຜຶ່ງຈີວອນທີ່ປຽກຊຸ່ມ ແລ້ວເຂົ້າວິຫາຣ ພິກສຸນີອີກຮູບນຶ່ງຫົ່ມຈີວອນຜືນນັ້ນເຂົ້າໄປບິນທບາຕໃນຫມູ່ບ້ານ ພິກສຸນີ(ເຈົ້າຂອງຈີວອນ)ນັ້ນອອກມາຖາມພິກສຸນີທັງຫລາຍວ່າ "ແມ່ເຈົ້າທັງຫລາຍເຫັນຈີວອນຂອງຂະນ້ອຍແດ່ບໍ່"

ພິກສຸນີທັງຫລາຍບອກເຣື້ອງນັ້ນໃຫ້ພິກສຸນີນັ້ນຊາບ ລຳດັບນັ້ນ ພິກສຸນີນັ້ນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງຫົ່ມຈີວອນຂອງຂະນ້ອຍໂດຍບໍ່ບອກລະ" ແລ້ວບອກເຣື້ອງນັ້ນ ໃຫ້ພິກສຸນີທັງຫລາຍຊາບບັນດາພິກສຸນີຜູ້ມັກນ້ອຍ ฯລฯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງຫົ່ມຈີວອນຂອງພິກສຸນີອື່ນໂດຍບໍ່ບອກລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳ ເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກ ໃຫ້ຊົງ ຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຫົ່ມຈີວອນຂອງພິກສຸນີອື່ນໂດຍບໍ່ບອກ ແມ່ນ ແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະ ເຈົ້າຊົງຕຳໜິວ່າ "ฯລฯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງຫົ່ມຈີວອນຂອງພິກສຸນີອື່ນໂດຍບໍ່ບອກ ລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລື ເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໖. ນັຄຄວັຄ ສິກຂາບົດທີ ໕ ບົທພາຊນີຍ໌**

**ພຣະບັນຍັດ**

[໘໐໖] ກໍພິກສຸນີໃດຫົ່ມຈີວອນສັບປ່ຽນກັນ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຮູບນຶ່ງ ຈົບ

**ສິກຂາບົທວິພັງຄ໌**

[໘໐໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຈີວອນສັບປ່ຽນກັນ ໄດ້ແກ່ ຈີວອນ ໕ ຜືນ໑ ຢ່າງໃດຢ່າງນຶ່ງຂອງອຸປສັມບັນ ພິກສຸນີ ນຸ່ງຫລືຫົ່ມຈີວອນນັ້ນທີ່ເຈົ້າຂອງບໍ່ໄດ້ໃຫ້ ຫລືໂດຍບໍ່ໄດ້ບອກກ່າວ ຕ້ອງອາບັຕິປາຈິຕຕີຍ໌

**ປິຫຼາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໕] ອຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ຫົ່ມຈີວອນສັບປ່ຽນກັນ ຕ້ອງອາບັຕິປາຈິຕຕີຍ໌

ອຸປສັມບັນ ພິກສຸນີບໍ່ແນ່ໃຈ ຫົ່ມຈີວອນສັບປ່ຽນກັນ ຕ້ອງອາບັຕິປາຈິຕຕີຍ໌

ອຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ຫົ່ມຈີວອນສັບປ່ຽນກັນ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ຈີວອນ ៥ ຜືນ ດູ ໝາຍເຫດຂໍ້ ໗໘໗ ຫນ້າ ໑໙໔

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ៦. ນັຄຄວັຄ ສິກຂາບົດທີ ៥ ອນາປັຕຕິວາຣ**

**ທຸກກະຕະ**

ພິກສຸນີຫົ່ມຈີວອນສັບປ່ຽນກັນກັບອນຸປສັມບັນ ຕ້ອງອາບັຕິທຸກກະຕະ

ອນຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກະຕະ

ອນຸປສັມບັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ອນຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐៦] ໑. ພິກສຸນີນຸ່ງຫລືຫົ່ມຈີວອນທີ່ເຈົ້າຂອງໃຫ້ ຫລືພິກສຸນີນຸ່ງຫລືຫົ່ມຈີວອນນັ້ນ ໂດຍບອກເຈົ້າຂອງກ່ອນ

໒. ພິກສຸນີມີຈີວອນຖືກຊີງໄປ

໓. ພິກສຸນີມີຈີວອນສູນຫາຍ

໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໕. ພິກຂຸນີວິກົລຈິຕ
໖. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໓. ນັຄຄວັຄ ສິກຂາບົດທີ ໖ ນິທານວັຕຖຸ ໓. ນັຄຄວັຄ

### ສິກຂາບົດທີ ໖

ວ່າດ້ວຍການທຳອັນຕຣາຍແກ່ຈີວອນລາພຂອງຄນະ

### ເຣື້ອງພິກຂຸນີຖຸລລະນັນທາ

[໘໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ຕະກູນອຸປັຕຖາກຂອງພິກຂຸນີຖຸລລະນັນທາໄດ້ກ່າວກັບພິກຂຸນີຖຸລລະນັນທາດັ່ງນີ້ວ່າ "ແມ່ເຈົ້າ ພວກເຮົາຈະຖວາຍຈີວອນແກ່ພິກຂຸນີສົງຂ໌" ພິກຂຸນີຖຸລລະນັນທາກ່າວວ່າ "ພວກທ່ານມີກິຈມາກ ມີສິ່ງທີ່ຕ້ອງທຳມາກ" ໄດ້ທຳອັນຕຣາຍ(ແກ່ລາພຂອງຄນະ) ຕໍ່ມາ ເຮືອນຕະກູນນັ້ນຖືກໄຟໄໝ້ ພວກເຂົາຕຳໜິປະນາມ ໂພນທະນາວ່າ "ຈັ່ງໃດພິກຂຸນີຖຸລລະນັນທາຈຶ່ງທຳອັນຕຣາຍໄທຍທັມຂອງພວກເຮົາລະ ພວກເຮົາຕ້ອງຄາດຈາກສົມບັຕທັງສອງ ຄື ໂພຄສົມບັຕແລະບຸນສົມບັຕ" ພິກຂຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງທຳອັນຕຣາຍແກ່ຈີວອນທີ່ຄນະຈະຄວນໄດ້ລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພິກຂຸນີຖຸລລະນັນທາທຳອັນຕຣາຍແກ່ຈີວອນທີ່ຄນະຈະຄວນໄດ້ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພິກຂຸນີຖຸລລະນັນທາ ຈຶ່ງທຳອັນຕຣາຍແກ່ຈີວອນທີ່ຄນະຈະຄວນໄດ້ລະ ພິກຂຸທັງຫລາຍ ການເຮັດຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມ

ໃສ່ໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໖. ນັຄຄວັຄ ສິກຂາບົດທີ ໘ ອນາປັຕຕິວາຣ**

**ພຣະບັນຍັດ**

[໙໐໘] ກໍພິກສຸນີໃດທໍາອັນຕຣາຍແກ່ຈີວອນທີ່ຄນະຈະຄອນໄດ້ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໙໐໙] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຄນະ ພຣະຜູ້ມີພຣະພາກຕຣັສຫມາຍເຖິງພິກສຸນີສົງຂ໌

ທີ່ຊື່ວ່າ ຈີວອນ ໄດ້ແກ່ ຈີວອນ ໖ ຊນິດ ຢ່າງໃດຢ່າງນຶ່ງຊຶ່ງມີຂນາດພໍທີ່ຈະວິກັປ ໄດ້ເປັນຢ່າງຕໍ່າ

ຄໍາວ່າ ທໍາອັນຕຣາຍ ຄື ທໍາອັນຕຣາຍດ້ວຍກ່າວວ່າ "ຊົນທັງຫລາຍຈະຄອນຖວາຍຈີວອນນີ້ໄດ້ຢ່າງໃດກັນ" ຕ້ອງອາບັຕິປາຈິຕຕີຍ໌ ທໍາອັນຕຣາຍບໍຣິຂາຣຢ່າງອື່ນ ຕ້ອງອາບັຕິທຸກກະຕະ ທໍາອັນຕຣາຍຈີວອນຫລືບໍຣິຂາຣຢ່າງອື່ນຂອງພິກສຸນີຫລາຍຮູບ ພິກສຸນີຮູບດຽວຫລືຂອງອນຸປສັມບັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໑໐] ໑. ພິກສຸນີສະແດງອານິສົງສ໌ແລ້ວກ່າວຫ້າມ

໔. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໘ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຖ໌] ໓. ນັຄຄວັຄ ສິກຂາບົດທີ ໗ ນິທານວັຕຖຸ ໓. ນັຄຄວັຄ

### ສິກຂາບົດທີ ໗

ວ່າດ້ວຍການຄັດຄ້ານການແຈກຈີວອນທີ່ຊອບທັມ

### ເຣື້ອງພິກສຸນີຖຸລລະນັນທາ

[໘໑໑] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ອກາລຈີວອນເກີດຂຶ້ນແກ່ພິກສຸນີສົງຂ໌ ລຳດັບນັ້ນ ພິກສຸນີ ສົງຂ໌ປະສົງຄ໌ຈະແຈກຈີວອນນັ້ນ ຈຶ່ງປະຊຸມກັນ ເວລານັ້ນພວກພິກສຸນີອັນເຕວາສີນີຂອງພິກສຸນີ ຖຸລລະນັນທາຫລີກໄປແລ້ວ ພິກສຸນີຖຸລລະນັນທາໄດ້ກ່າວກັບພິກສຸນີເຫລົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າທັງ ຫລາຍ ພິກສຸນີທັງຫລາຍຫລີກໄປແລ້ວ ຢ່າຄອນແຈກຈີວອນເລີຍ" ຄັດຄ້ານການແຈກຈີວອນ ພວກພິກສຸນີກ່າວວ່າ "ຢ່າຄອນແຈກຈີວອນເລີຍ" ແລ້ວແຍກຍ້າຍກັນໄປ ເມື່ອເຫລົ່າພິກສຸນີອັນເຕ ວາສີນີກັບມາ ພິກສຸນີຖຸລລະນັນທາຈຶ່ງໃຫ້ແຈກຈີວອນນັ້ນ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນ ຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງຄັດຄ້ານການແຈກຈີວອນທີ່ຊອບ ທັມ[໑] ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກ ພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາຄັດຄ້ານການແຈກຈີວອນທີ່ຊອບທັມ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະ ເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາ

**ໝາຍເຫດ :**

໑ "ການແຈກຈີວອນທີ່ຊອບທັມ" ຄືການແຈກຈີວອນທີ່ສົງຂ໌ຜູ້ພ້ອມພຽງກັນ ປະຊຸມກັນແລ້ວດຳ ເນີນການຮ່ວມກັນ (ກົງຂາ. ອ. ໓໗໗)

ຈຶ່ງຄັດຄ້ານການແຈກຈີວອນທີ່ຊອບທັມລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ໌ໃຫ້ເຫລື້ອມໃສ໌ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສ໌ຢູ່ແລ້ວໃຫ້ເຫລື້ອມໃສ໌ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໙໑໘] ກໍພິກສຸນີໃດຄັດຄ້ານການແຈກຈີວອນທີ່ຊອບທັມ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໙໑໓] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ການແຈກຈີວອນທີ່ຊື່ວ່າ ຊອບທັມ ໄດ້ແກ່ ພິກສຸນີສົງຂ໌ຜູ້ພ້ອມພຽງກັນ ປະຊຸມກັນແຈກ

ຄຳວ່າ ຄັດຄ້ານ ຄື ຄັດຄ້ານວ່າ "ຈະແຈກຈີວອນນີ້ຢ່າງໃດ" ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

[໙໑໔] ການແຈກຊອບທັມ ພິກສຸນີສຳຄັນວ່າຊອບທັມ ຄັດຄ້ານ ຕ້ອງອາບັຕິປາຈິຕຕີຍ໌

ການແຈກຊອບທັມ ພິກສຸນີບໍ່ແນ່ໃຈ ຄັດຄ້ານ ຕ້ອງອາບັຕິທຸກກະຕະ

ການແຈກຊອບທັມ ພິກສຸນີສຳຄັນວ່າບໍ່ຊອບທັມ ຄັດຄ້ານ ບໍ່ຕ້ອງອາບັຕິ

ການແຈກຊອບທັມ ພິກສຸນີສຳຄັນວ່າຊອບທັມ ຄັດຄ້ານ ຕ້ອງອາບັຕິທຸກກະຕະ

ການແຈກບໍ່ຊອບທັມ ພິກສຸນີບໍ່ແນ່ໃຈ ຄັດຄ້ານ ຕ້ອງອາບັຕິທຸກກະຕະ

ການແຈກບໍ່ຊອບທັມ ພິກສຸນີສຳຄັນວ່າບໍ່ຊອບທັມ ຄັດຄ້ານ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໑໕] ໑. ພິກສຸນີສະແດງອານິສົງສ໌ແລ້ວຄັດຄ້ານ໑

໔. ພິກສຸນີວິກົລຈິຕ

໓. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ໝາຍເຫດ :**

໑ "ສະແດງອານິສົງສ໌ແລ້ວຄັດຄ້ານ" ຫມາຍເຖິງໃນກໍຣະນີທີ່ຈີວອນມີບໍ່ພໍແບ່ງກັນໃຫ້ໄດ້ຄົບທຸກຮູບ ຈຶ່ງສະແດງອານິສົງສ໌ ຄືໃຫ້ເຫດຸຜົລວ່າ ຜ້າສາດົກບໍ່ພຽງພອຍັງຂາດຢູ່ຜືນນຶ່ງ ໄປຣດຖ້າສັກ ໔-໕ ວັນເຖິດ ເມື່ອຜ້າສາດົກມີພໍທີ່ຈະແຈກກັນຄົບທຸກຮູປແລ້ວຈຶ່ງແຈກກັນ (ວິ. ອ. ໔/໕໑໕/໕໐໔)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ນັຄຄວັຄ ສິກຂາບົດທີ ໘ ນິທານວັຕຖຸ ໕. ນັຄຄວັຄ**

**ສິກຂາບົດທີ ໘**

ວ່າດ້ວຍການໃຫ້ສະມະນະຈີວອນແກ່ຜູ້ບໍ່ແມ່ນພິກສຸນີ

**ເຣື້ອງພິກສຸນີຖຸລລະນັນທາ**

[໕໑໖] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທີກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາໃຫ້ສະມະນະຈີວອນແກ່ພວກຄຣູນັກຟ້ອນແດ່ ພວກນັກຟ້ອນແດ່ ພວກໂຕນໄມ້ຄ້ຳແດ່ ພວກມາຍາກົລແດ່ພວກຕີກອງແດ່ ກ່າວວ່າ "ພວກທ່ານ ຈົ່ງກ່າວພັນນາຄຸນຂອງຂະນ້ອຍໃນຊຸມນຸມຊົນ" ພວກຄຣູນັກຟ້ອນແດ່ ພວກນັກຟ້ອນແດ່ ພວກໂຕນໄມ້ຄ້ຳແດ່ ພວກມາຍາກົລແດ່ພວກຕີກອງແດ່ ຕ່າງກ່າວພັນນາຄຸນຂອງພິກສຸນີຖຸລລະນັນທາໃນຊຸມນຸມຊົນວ່າ "ແມ່ເຈົ້າຖຸລລະນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວທັມມີກຖາ ພວກທ່ານຈົ່ງຖວາຍ ຈົ່ງກະທຳ(ສັກກາຣະ)ແກ່ທ່ານ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງໃຫ້ສະມະນະຈີວອນແກ່ຊາວບ້ານລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫດຸ ຊົງສອບຖາມພິກສຸ

ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາໃຫ້ສະມະນະຈີວອນແກ່ຊາວບ້ານ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງໃຫ້ສະມະນະຈີວອນແກ່ຊາວບ້ານລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໓. ນັຄຄວັຄ ສິກຂາບົດທີ ໗ ອນາປັຕຕິວາຣ

### ພຣະບັນຍັດ

[໙໑໗] ກໍພິກສຸນີໃດໃຫ້ສະມະນະຈີວອນແກ່ຊາວບ້ານ ແກ່ປຣິພາຊກ ຫລືປຣິພາຊິກາ ຕ້ອງອາບັຕິປາຈິຕຕີຍ໌

ເລື່ອງພິກສຸນີຖຸລລະນັນທາ ຈົບ

### ສິກຂາບົທວິພັງຄ໌

[໙໑໘] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຊາວບ້ານ ໄດ້ແກ່ ຜູ້ຄອງເຮືອນຄົນໃດຄົນນຶ່ງ

ທີ່ຊື່ວ່າ ປຣິພາຊກ ໄດ້ແກ່ ນັກບວຊຊາຍຄົນໃດຄົນນຶ່ງຜູ້ຢູ່ໃນລັທທິປຣິພາຊກ ຍົກເວັ້ນພິກສຸແລະສາມເນນ

ທີ່ຊື່ວ່າ ປຣິພາຊິກາ ໄດ້ແກ່ ນັກບວຊຍິງຄົນໃດຄົນນຶ່ງຜູ້ຢູ່ໃນລັທທິປຣິພາຊິກາ ຍົກເວັ້ນພິກສຸນີສິກຂມານາ ແລະສາມເນຣີ

ທີ່ຊື່ວ່າ ສະມະນະຈີວອນ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຜ້າທີ່ທຳກັປປະແລ້ວ ພິກສຸນີໃຫ້ຜ້ານັ້ນຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໙໑໙] ໑. ພິກສຸນີໃຫ້ແກ່ມາຣດາບິດາ
໒. ພິກສຸນີໃຫ້ເປັນຂອງຢືມ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໓. ນັຄຄວັຄ ສິກຂາບົດທີ ໙ ນິທານວັຕຖຸ ໓. ນັຄຄວັຄ**

**ສິກຂາບົດທີ ໙**
ວ່າດ້ວຍການໃຫ້ລ່ວງເລີຍສມັຍແຫ່ງຈີວອນກາລ

**ເຣື່ອງພິກສຸນີຖຸລລະນັນທາ**
[໙໒໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ຕະກູນອຸປັຕຖາກຂອງພິກສຸນີຖຸລລະນັນທາໄດ້ກ່າວກັບພິກສຸນີຖຸລລະນັນທາດັ່ງນີ້ວ່າ "ແມ່ເຈົ້າ ຖ້າພວກເຮົາສາມາດ ກໍຈະຖວາຍຈີວອນແກ່ພິກສຸນີສົງຂ໌" ຄັນພິກສຸນີທັງຫລາຍຈຳພັນສາແລ້ວປະຊຸມກັນດ້ວຍປະສົງຄ໌ຈະແຈກຈີວອນ ພິກສຸນີຖຸລລະນັນທາໄດ້ກ່າວກັບພິກສຸນີເຫລົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າທັງຫລາຍໂປຣດຖ້າກ່ອນ ພິກສຸນີສົງຂ໌ມີຄວາມຫວັງໃນຈີວອນ" ພິກສຸນີທັງຫລາຍໄດ້ກ່າວກັບພິກສຸນີຖຸລລະນັນທາດັ່ງນີ້ວ່າ "ແມ່ເຈົ້າ ເຊີນທ່ານໄປສືບດູຈີວອນນັ້ນໃຫ້ຮູ້ເຣື່ອງ" ພິກສຸນີຖຸລລະນັນທາເຂົ້າໄປເຖິງຕະກູນນັ້ນ ຄັນເຖິງແລ້ວໄດ້ກ່າວກັບຄົນເຫລົ່ານັ້ນດັ່ງນີ້ວ່າ "ທ່ານທັງຫລາຍຈົ່ງຖວາຍຈີວອນແກ່ພິກສຸນີສົງຂ໌" ຄົນເຫລົ່ານັ້ນກ່າວວ່າ "ພວກເຮົາຍັງບໍ່ສາມາດທີ່ຈະຖວາຍຈີວອນແກ່ພິກສຸນີສົງຂ໌" ພິກສຸນີຖຸລລະນັນທານຳເຣື່ອງນັ້ນໄປບອກໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາ ວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງໃຫ້ລ່ວງເລີຍສມັຍແຫ່ງຈີວອນກາລດ້ວຍຄວາມຫວັງໃນ

ຈີວອນທີ່ເລື່ອນລອຍ໔ ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເອື້ອງນີ້ໄປບອກພິກສຸທັງຫລາຍ ໃຫ້ຊາບ ພອກພິກສຸໄດ້ນຳເອື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ໝາຍເຫດ :**

໑ ສມັຍແຫ່ງຈີວອນກາລ ຄືໃນເມື່ອບໍ່ໄດ້ກຣານກະຖິນນັບເອົາຕັ້ງແຕ່ແຮມ ໑ ຄໍ່າເດືອນ ໑໑ ເຖິງ ຂຶ້ນ ໑໕ ຄໍ່າເດືອນ ໑໔ ຮວມເວລາ ໑ ເດືອນ ໃນເມື່ອໄດ້ກຣານກະຖິນແລ້ວ ນັບເອົາຕັ້ງແຕ່ ແຮມ ໑ ຄໍ່າ ເດືອນ ໑໑ ເຖິງຂຶ້ນ ໑໕ ຄໍ່າ ເດືອນ ໔ ຮວມເວລາ ໕ ເດືອນ ຣະຍະເວລາ ໃນຊ່ວງນີ້ຮຽກວ່າ ສມັຍແຫ່ງຈີວອນກາລ

໔ "ຄວາມຫວັງໃນຈີວອນທີ່ເລື່ອນລອຍ" ຫມາຍເຖິງຄວາມຫວັງທີ່ພິກສຸນີຕັ້ງໄວ້ເພາະໄດ້ຟັງ ພຽງຄຳຂອງທາຍົກວ່າ "ຖ້າສາມາດກໍຈະຖວາຍ" ເປັນຄວາມຫວັງທີ່ເລື່ອນລອຍ ບໍ່ແນ່ນອນ (ກງີ ຂາ. ອ. ນິກຖຼ)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑. ນັຄຄວັຄ ສິກຂາບົດທີ ໙ ສິກຂາບົທວິພັງຄ໌

### ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາໃຫ້ລ່ວງເລີຍສມັຍແຫ່ງຈີວອນກາລ ຜ່ານໄປດ້ວຍຄວາມຫວັງໃນຈີວອນທີ່ເລື່ອນລອຍ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນ ແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງ ໃດພິກສຸນີຖຸລລະນັນທາຈຶ່ງໃຫ້ລ່ວງເລີຍສມັຍແຫ່ງຈີວອນກາລຜ່ານໄປດ້ວຍຄວາມຫວັງໃນຈີວອນ ທີ່ເລື່ອນລອຍລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວ ຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໙໔໑] ກໍພິກສຸນີໃດໃຫ້ລ່ວງເລີຍສມັຍແຫ່ງຈີວອນກາລດ້ວຍຄວາມຫວັງໃນຈີວອນທີ່ເລື່ອນລອຍ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໙໔໔] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຄວາມຫວັງໃນຈີວອນທີ່ເລື່ອນລອຍ ໄດ້ແກ່ ທີ່ທາຍົກເປັ່ງອາຈາປວາຣນາວ່າ “ຖ້າພວກເຮົາສາມາດ ກໍຈະຖວາຍ ຈະເຮັດ”

ທີ່ຊື່ວ່າ ສມັຍແຫ່ງຈີວອນກາລ ຄື ເມື່ອຍັງບໍ່ໄດ້ກຣານກະຖິນ ມີກໍາຫນົດ ໑ ເດືອນ ທ້າຍຣະດູຝົນ ເມື່ອໄດ້ກຣານກະຖິນແລ້ວມີກໍາຫນົດ ໕ ເດືອນ

ຄໍາວ່າ ໃຫ້ລ່ວງເລີຍສມັຍແຫ່ງຈີວອນກາລ ຄວາມວ່າ ເມື່ອຍັງບໍ່ໄດ້ກຣານກະຖິນ ໃຫ້ລ່ວງເລີຍວັນສຸດທ້າຍຣະດູຝົນ ຕ້ອງອາບັຕິປາຈິຕຕີຍ໌ ເມື່ອໄດ້ກຣານກະຖິນແລ້ວ ໃຫ້ລ່ວງເລີຍວັນທີ່ກຖິນເດາະ໑ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

[໙໔໕] (ຄວາມຫວັງໃນ)ຈີວອນທີ່ເລື່ອນລອຍ ພິກສຸນີສໍາຄັນວ່າ(ເປັນຄວາມຫວັງໃນ) ຈີວອນທີ່ເລື່ອນລອຍ ໃຫ້ລ່ວງເລີຍສມັຍຈີວອນກາລໄປ ຕ້ອງອາບັຕິປາຈິຕຕີຍ໌

(ຄວາມຫວັງໃນ)ຈີວອນທີ່ເລື່ອນລອຍ ພິກສຸນີບໍ່ແນ່ໃຈ ໃຫ້ລ່ວງເລີຍສມັຍແຫ່ງຈີວອນກາລ ຕ້ອງອາບັຕິທຸກກະຕະ

(ຄວາມຫວັງໃນ)ຈີວອນທີ່ເລື່ອນລອຍ ພິກສຸນີສໍາຄັນວ່າເປັນ(ຄວາມຫວັງໃນ)ຈີວອນບໍ່ເລື່ອນລອຍ ໃຫ້ລ່ວງເລີຍສມັຍແຫ່ງຈີວອນກາລ ບໍ່ຕ້ອງອາບັຕິ

(ຄວາມຫວັງໃນ)ຈີວອນທີ່ບໍ່ເລື່ອນລອຍ ພິກສຸນີສໍາຄັນວ່າເປັນ(ຄວາມຫວັງໃນ)ຈີວອນທີ່ເລື່ອນລອຍ ຕ້ອງອາບັຕິທຸກກະຕະ

(ຄວາມຫວັງໃນ)ຈີວອນທີ່ບໍ່ເລື່ອນລອຍ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

(ຄວາມຫວັງໃນ)ຈີວອນທີ່ບໍ່ເລື່ອນລອຍ ພິກຂຸນີສຳຄັນວ່າເປັນ(ຄວາມຫວັງໃນ)ຈີວອນທີ່ບໍ່ເລື່ອນລອຍ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໔] ໑. ພິກຂຸນີຊະແດງອານິສົງສ໌ແລ້ວຫ້າມ

໔. ພິກຂຸນີວິກົລຈິຕ

໖. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໙ ຈົບ

**ໝາຍເຫດ :**

໑ ຫມາຍເຖິງຍກເລີກອານິສົງສ໌ກຖິນທີ່ພິກຂຸແລະພິກຂຸນີຄວນໄດ້ຮັບ ດູ ເຫຕຸໃຫ້ກຖິນເດາະ ພຣະວິນັຍປິດົກແປລ ເຫລັ້ມ ໔ ຂໍ້ ໔໓໖ ຫນ້າ ໔

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໖. ນັຄຄວັຄ ສິກຂາບົດທີ ໑໐ ນິທານວັຕຖຸ**

**໖. ນັຄຄວັຄ**

**ສິກຂາບົດທີ ໑໐**

ວ່າດ້ວຍການຫ້າມການເດາະກະຖິນທີ່ຊອບທັມ

## ເຣື້ອງອຸບາສິກຄົນນຶ່ງ

[໙໕] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ອຸບາສິກຄົນນຶ່ງໃຫ້ສ້າງວິຫາຣອຸທິສ(ຖວາຍ)ສົງຂ໌ ໃນການສລອງວິຫາຣນັ້ນ ອຸບາສິກນັ້ນປະສົງຄ໌ຈະຖວາຍອກາລຈີວອນແກ່ສົງຂ໌ທັງສອງຝ່າຍ ແຕ່ເວລານັ້ນສົງຂ໌ທັງສອງຝ່າຍກຣານກະຖິນແລ້ວ ລຳດັບນັ້ນ ອຸບາສິກນັ້ນເຂົ້າໄປຫາສົງຂ໌ ຂໍການເດາະກະຖິນ໑ ພິກຂຸທັງຫລາຍຈຶ່ງໄດ້ຂາບທູລເຣື້ອງນັ້ນໃຫ້ພຣະຜູ້ມີພຣະພາກຊົງຊາບ ລຳດັບນັ້ນ ພຣະຜູ້ມີພຣະພາກຊົງ

ສະແດງທັມມິກຖາເພາະເຣື້ອງນີ້ເປັນຕົ້ນເຫຕຸ ຕຣັສວ່າ "ພິກສຸທັງຫລາຍ ເຮົາອນຸຍາຕໃຫ້ເດາະກະຖິນໄດ້"

**ວິທີການເດາະກະຖິນແລະກັມວາຈາເດາະກະຖິນ**

ພິກສຸທັງຫລາຍຄວນເດາະກະຖິນຢ່າງນີ້ ຄືພິກສຸຜູ້ສລາດສາມາດຄວນປະກາດໃຫ້ສົງຄ໌ຊາບດ້ວຍຍັຕຕິທຸຕິຍກັມວາຈາວ່າ

[໘໔໕] "ທ່ານຜູ້ຈະເຣີນ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ຖ້າສົງຄ໌ພ້ອມກັນແລ້ວກໍຄວນເດາະກະຖິນ ນີ້ເປັນຍັຕຕິ ທ່ານຜູ້ຈະເຣີນ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ສົງຄ໌ຍ່ອມເດາະກະຖິນ ທ່ານຮູບໃດເຫັນດ້ວຍກັບ

ການເດາະກະຖິນ ທ່ານຮູບນັ້ນຄວນນິ່ງ ທ່ານຮູບໃດບໍ່ເຫັນດ້ວຍ ທ່ານຮູບນັ້ນຄວນທັກທ້ວງ ສົງຄ໌ເດາະກະຖິນແລ້ວ ສົງຄ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງ ນັ້ນເປັນມະຕິຢ່າງນີ້"

**ໝາຍເຫດ :**

໑ ຂໍການເດາະກະຖິນ ໃນທີ່ນີ້ຄືຂໍໃຫ້ສົງຄ໌ຍກເລີກອານິສົງສ໌ກະຖິນກ່ອນຫມົດເຂຕອານິສົງສ໌ກະຖິນດ້ວຍຕ້ອງການຈະຖວາຍຜ້າເປັນອກາລຈີວອນໃນສມັຍທີ່ຍັງເປັນຈີວອນກາລ (ດູ ວິນັຍປິດົກແປລເຫລັ້ມ ໔ ຂໍ້ ໕໐໐ ໜ້າ ໔໑)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໖. ນັຄຄວັຄ ສິກຂາບົດທີ ໑໐ ສິກຂາບົທວິພັງຄ໌

[໘໔໗] ຕໍ່ມາ ອຸບາສິກນັ້ນເຂົ້າໄປຫາພິກສຸນີສົງຄ໌ ຂໍເດາະກະຖິນ ພິກສຸນີຖຸລລະນັນທາກ່າວວ່າ "ພວກຂະນ້ອຍຈັກມີຈີວອນ" ຄັດຄ້ານການເດາະກະຖິນ ດັ່ງນັ້ນ ອຸບາສິກນັ້ນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີທັງຫລາຍຈຶ່ງບໍ່ໃຫ້ການເດາະກະຖິນແກ່ເຮົາລະ" ພິກສຸນີທັງຫລາຍໄດ້ຍິນອຸບາສິກຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງຄັດຄ້ານການເດາະກະຖິນທີ່ຊອບທັມລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົດ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າພິກສຸນີຖຸລລະນັນທາຄັດຄ້ານການເດາະກະຖິນທີ່ຊອບທັມ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາ ຈຶ່ງຄັດຄ້ານການເດາະກະຖິນທີ່ຊອບທັມລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໙໔໗] ກໍພິກສຸນີໃດຄັດຄ້ານການເດາະກະຖິນທີ່ຊອບທັມ ຕ້ອງອາບັດປາຈິຕຕີຍ໌

ເຣື່ອງອຸບາສິກຄົນນຶ່ງ ຈົບ

**ສິກຂາບົດວິພັງຄ໌**

[໙໔໙] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໓. ນັຄຄວັຄ ສິກຂາບົດທີ ໑໐ ອນາປັຕຕິວາຣ**

ການເດາະກະຖິນທີ່ຊື່ວ່າ ຊອບທັມ ຄື ພິກສຸນີສົງຊ໌ຜູ້ພ້ອມພຽງກັນປະຊຸມກັນເດາະ
ຄຳວ່າ ຄັດຄ້ານ ຄື ຄັດຄ້ານວ່າ "ຈະເດາະກະຖິນໄດ້ຢ່າງໃດ" ຕ້ອງອາບັດປາຈິຕຕີຍ໌

**ບົທພາຊນີຍ໌**

[໙໕໐] ການເດາະທີ່ຊອບທັມ ພິກສຸນີສຳຄັນວ່າຊອບທັມ ຄັດຄ້ານ ຕ້ອງອາບັດປາຈິຕຕີຍ໌
ການເດາະທີ່ຊອບທັມ ພິກສຸນີບໍ່ແນ່ໃຈ ຄັດຄ້ານ ຕ້ອງອາບັດທຸກກະຕະ
ການເດາະທີ່ຊອບທັມ ພິກສຸນີສຳຄັນວ່າບໍ່ຊອບທັມ ຄັດຄ້ານ ບໍ່ຕ້ອງອາບັດ

ກາຣເດາະທີ່ບໍ່ຊອບທຳມ ພິກສຸນີສຳຄັນວ່າຊອບທຳມ ຄັດຄ້ານ ຕ້ອງອາບັຕິທຸກກະຕະ
ກາຣເດາະທີ່ບໍ່ຊອບທຳມ ພິກສຸນີບໍ່ແນ່ໃຈ ຄັດຄ້ານ ຕ້ອງອາບັຕິທຸກກະຕະ
ກາຣເດາະທີ່ບໍ່ຊອບທຳມ ພິກສຸນີສຳຄັນວ່າບໍ່ຊອບທຳມ ຄັດຄ້ານ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໙໖໑] ໑. ພິກສຸນີສະແດງອານິສົງສ໌ແລ້ວຫ້າມ
໔. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ
ນັຄຄວັຄທີ ໖ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໑ ນິທານວັຕຖຸ**

**໔. ຕຸວັຕຕວັຄ**
ຫມວດວ່າດ້ວຍກາຣນອນຮ່ວມກັນ

**ສິກຂາບົດທີ ໑**
ວ່າດ້ວຍກາຣນອນເຫິງຕຽງດຽວກັນ

## ເຣື້ອງພິກສຸນີນອນຮ່ວມກັນ ໔ ຮູບ

[໙໖໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີ ໔ ຮູບ ນອນເຫິງຕຽງດຽວກັນ ຄົນທັງຫລາຍທຽວ ຈາຣິກໄປຕາມວິຫາຣເຫັນແລ້ວຈຶ່ງຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີ ໔ ຮູບຈຶ່ງນອນ ເຫິງຕຽງດຽວກັນເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນຊາວບ້ານ ຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີ ໔ ຮູບຈຶ່ງນອນຕຽງດຽວກັນລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປ ບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີ ໔ ຮູບນອນເທິງຕຽງດຽວກັນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີ ໔ ຮູບຈຶ່ງນອນເທິງຕຽງດຽວກັນລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ ໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມ ໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍ ຍົກສິກ ຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໙໓໓] ກໍພິກສຸນີເຫລົ່າໃດ ໔ ຮູບນອນເທິງຕຽງດຽວກັນ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີນອນຮ່ວມກັນ ໔ ຮູບ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໑ ອນາປັຕຕິ ວາຣ**

**ສິກຂາບົທວິພັງຄ໌**

[໙໓໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ພຣະຜູ້ມີພຣະພາກຕຣັສໝາຍເຖິງເຫລົ່າມາຕຸຄາມທີ່ອຸປສົມບົທແລ້ວ
ຄຳວ່າ ໔ ຮູບ ນອນເທິງຕຽງດຽວກັນ ຄື ເມື່ອຮູບນຶ່ງນອນ ອີກຮູບນຶ່ງກໍນອນ ຕ້ອງອາບັຕິ ປາຈິຕຕີຍ໌ ຫລືນອນພ້ອມກັນ ໔ ຮູບ ຕ້ອງອາບັຕິປາຈິຕຕີຍ໌ ທັງ ໔ ຮູບ ລຸກຂຶ້ນແລ້ວກັບນອນ ອີກ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໙໓໕] ໑. ພິກສຸນີຮູບນຶ່ງນອນ ອີກຮູບນຶ່ງນັ່ງ ຫລືນັ່ງທັງ ໔ ຮູບ

໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໔ ນິທານວັຕຖຸ**

**໔. ຕຸວັຕຕວັຄ**

**ສິກຂາບົດທີ ໔**

ວ່າດ້ວຍກາຣໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ

**ເຣື້ອງພິກສຸນີນອນຮ່ວມກັນ ໔ ຮູບ**

[໙໕໕] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນພິກສຸນີ ໔ ຮູບໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ນອນຮ່ວມກັນ ຄົນທັງຫລາຍທຽວຈາຣິກໄປຕາມວິຫາຣເຫັນແລ້ວຈຶ່ງຕຳຫນິ ປະນາມ ໂພນທະນາ ວ່າ "ຈັ່ງໃດພິກສຸນີ ໔ ຮູບຈຶ່ງໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ນອນຮ່ວມກັນເຫມືອນ ຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນຄົນພວກນັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພິກສຸນີ ໔ ຮູບ ຈຶ່ງໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ນອນຮ່ວມກັນລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນ ໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະ ພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າພິກສຸນີ ໔ ຮູບ ໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າ ຫົ່ມນອນຮ່ວມກັນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ຈິງພຣະພຸດທະເຈົ້າຂ້າ" ພຣະຜູ້ມີ ພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍຈັ່ງໃດພິກສຸນີ ໔ ຮູບຈຶ່ງໃຊ້ຜ້າຜືນດຽວ ເປັນທັງຜ້າປູນອນແລະຜ້າຫົ່ມນອນຮ່ວມກັນລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດ

ໃຫ້ດິນທີ່ຍັງບໍ່ເຫລື້ອມໃສ່ໃຫ້ເຫລື້ອມໃສ ຫລືເຮັດໃຫ້ດິນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສ ຍິ່ງຂື້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂື້ນສະແດງດັ່ງນີ້

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໔ ບົທພາຊນີຍ໌

### ພຣະບັນຍັດ

[໙໖໗] ກໍພິກສຸນີເຫລົ່າໃດ ໔ ຮູບໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ນອນຮ່ວມກັນ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີນອນຮ່ວມກັນ ໔ ຮູບ ຈົບ

### ສິກຂາບົທວິພັງຄ໌

[໙໖໘] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ພຣະຜູ້ມີພຣະພາກຕຣັສຫມາຍເຖິງເຫລົ່າມາຕຸຄາມທີ່ອຸປສົມບົທແລ້ວ ຄຳວ່າ ໔ ຮູບໃຊ້ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມນອນຮ່ວມກັນ ຄື ທັງ ໔ ຮູບປູຜ້າຜືນ ນັ້ນແລ້ວຫົ່ມຜ້າຜືນນັ້ນແຫລະ ຕ້ອງອາບັຕິປາຈິຕຕີຍ໌

### ບົທພາຊນີຍ໌

### ຕິກປາຈິຕຕີຍ໌

[໙໖໙] ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ພິກສຸນີສຳຄັນວ່າຜ້າຜືນດຽວເປັນທັງຜ້າປູນອນ ແລະຜ້າຫົ່ມ ນອນ ຕ້ອງອາບັຕິປາຈິຕຕີຍ໌
ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ພິກສຸນີບໍ່ແນ່ໃຈ ນອນ ຕ້ອງອາບັຕິທຸກກະຕະ
ຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ພິກສຸນີສຳຄັນວ່າຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ນອນ ຕ້ອງອາບັຕິປາຈິຕຕີຍ໌

### ທຸກກະຕະ

ຜ້າປູນອນຜືນນຶ່ງ ຜ້າຫົ່ມນອນຕ່າງຜືນ ຕ້ອງອາບັຕິທຸກກະຕະ
ຜ້າປູນອນຕ່າງຜືນ ຜ້າຫົ່ມນອນຜືນດຽວກັນ ຕ້ອງອາບັຕິທຸກກະຕະ

ຜ້າປູນອນແລະຜ້າຫົ່ມນອນຕ່າງຜືນກັນ ພິກສຸນີສຳຄັນວ່າຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ຕ້ອງອາບັຕິທຸກກະຕະ

ຜ້າປູນອນແລະຜ້າຫົ່ມນອນຕ່າງຜືນກັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ຜ້າປູນອນແລະຜ້າຫົ່ມນອນຕ່າງຜືນກັນ ພິກສຸນີສຳຄັນວ່າຜ້າຜືນດຽວເປັນທັງຜ້າປູນອນແລະຜ້າຫົ່ມ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໔໐] ໑. ພິກສຸນີສະແດງເຄື່ອງກຳຫນົດແລ້ວນອນ

໒. ພິກສຸນີວິກົລຈິຕ

໓. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໒ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕະວັຄ ສິກຂາບົດທີ ໓ ນິທານວັຕຖຸ**

**໔. ຕຸວັຕຕະວັຄ**

**ສິກຂາບົດທີ ໓**

ວ່າດ້ວຍການຈົງໃຈກໍ່ຄວາມຣຳຄານ

**ເຣື້ອງພິກສຸນີຖຸລລະນັນທາ**

[໙໔໑] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວທັມມີກຖາໄດ້ ແມ່ນພຣະພັທທກາປິລານີກໍເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວທັມມີກຖາໄດ້ ທັງທ່ານກໍໄດ້ຮັບສັຣເສີນວ່າມີຄຸນສົມບັຕຍິ່ງກວ່າ໑ ຄົນທັງຫລາຍຊາບວ່າ “ແມ່ເຈົ້າພັທທກາປິລານີເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າສາມາດກ່າວທັມມີກຖາ ທັງໄດ້ຮັບສັຣເສີນວ່າມີຄຸນສົມບັຕຍິ່ງກວ່າ” ຈຶ່ງເຂົ້າໄປຫາພຣະພັທທກາປິລານີກ່ອນແລ້ວໄປຫາພິກສຸນີຖຸລລະນັນທາ ພາຍຫລັງພິກສຸນີຖຸລລະນັນທາຖືກຄວາມຣິສຍາຄອບງຳ ຄິດວ່າ “ຊາບມາວ່າ ທັມດາພິກສຸນີຜູ້

ສູາລະວນຢູ່ກັບການອວພິປຣາຍເຣື້ອງຣາວໃຫ້ຜູ້ອື່ນເຂົ້າໃຈ ຍ່ອມມັກນ້ອຍ ສັນໂດດ ຊອບສູງັດ ບໍ່ເກືອກກົ້ວ" ຈື່ງຈິງກິນ ແດ່ ຢືນແດ່ ນັ່ງແດ່ ນອນແດ່ ຍົກຂື້ນສູະແດງເອງແດ່ ໃຊ້ຜູ້ອື່ນໃຫ້ຍົກຂື້ນສູະແດງແດ່ ທ່ອງຈື່ມແດ່ ຕໍ່ຫນ້າພຣະພັທທກາປິລານີບັນດາພິກສູນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈື່ງຈິງໃຈກໍ່ຄວາມບໍ່ຜາສູກແກ່ແມ່ເຈົ້າພັທທກາປິລານີລະ" ຄັນແລ້ວພິກສູນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສູທັງຫລາຍໃຫ້ຊາບ ພວກພິກສູໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ໝາຍເຫດ :**

໑ "ມີຄຸນູສົມບັຕຍິ່ງກວ່າ" ຄືບວຊຈາກຕະກູນທີ່ໃຫຍ່ຫລືປະເສີດກວ່າແລະເປັນຜູ້ປະເສີດກວ່າໂດຍຄຸນູທັງຫລາຍ (ວິ. ອ. ໒/ລ໔໑/໕໐໕)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນູທ໌] ໔. ຕຸວັຕູຕູວັຄ ສິກຂາບົດທີ ໓ ສິກຂາບົທວິພັງຄ໌

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສູທັງຫລາຍວ່າ "ພິກສູທັງຫລາຍ ຊາບວ່າ ພິກສູນີຖຸລລະນັນທາຈິງໃຈກໍ່ຄວາມບໍ່ຜາສູກແກ່ພັທທກາປິລານີ ແມ່ນແທ້ບໍ" ພິກສູທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທູະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທູະເຈົ້າຊົງຕໍາຫນິວ່າ "ຯລຯ ພິກສູທັງຫລາຍ ຈັ່ງໃດພິກສູນີຖຸລລະນັນທາຈື່ງຈິງໃຈກໍ່ຄວາມບໍ່ຜາສູກແກ່ພັທທກາປິລານີລະ ພິກສູທັງຫລາຍ ການກະທໍາຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສູໃຫ້ເຫລື້ອມໃສູ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສູຢູ່ແລ້ວໃຫ້ເຫລື້ອມໃສູຍິ່ງຂື້ນໄດ້ເລີຍ ຯລຯ" ແລ້ວຈື່ງຮັບສັ່ງໃຫ້ພິກສູນີທັງຫລາຍຍົກສິກຂາບົທນີ້ຂື້ນສູະແດງດັ່ງນີ້

### ພຣະບັນຍັດ

[ລ໔໘] ກໍພິກສູນີໃດຈິງໃຈກໍ່ຄວາມບໍ່ຜາສູກແກ່ພິກສູນີ ຕ້ອງອາບັຕິປາຈິຕຕິຍ໌

ເຣື້ອງພິກສູນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໘໔໓] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ຄຳວ່າ ແກ່ພິກສຸນີ ຄື ແກ່ພິກສຸນີຮູບອື່ນ

ຄຳວ່າ ຈົງໃຈ ຄື ຮູ້ຢູ່ ຮູ້ດີຢູ່ ຈົງໃຈ ຝ່າຝືນ ລ່ວງລະເມີດ

ຄຳວ່າ ກໍ່ຄວາມບໍ່ຜາສຸກ ຄື ພິກສຸນີຜູ້ກໍ່ຄວາມບໍ່ຜາສຸກນັ້ນຄິດວ່າ "ວິທີນີ້ຈະເຮັດໃຫ້ພິກສຸນີນີ້ບໍ່ຜາສຸກ" ບໍ່ຂໍໂອກາສ ຈົງກົມແດ່ ຢືນແດ່ ນັ່ງແດ່ ນອນແດ່ຍົກຂຶ້ນສະແດງເອງແດ່ ໃຊ້ຜູ້ອື່ນໃຫ້ຍົກຂຶ້ນສະແດງແດ່ ທ່ອງຈົ່ມແດ່ ຢູ່ຂ້າງໜ້າ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໓ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໘໔໔] ອຸປສົມບັນ ພິກສຸນີສຳຄັນວ່າເປັນອຸປສົມບັນ ຈົງໃຈກໍ່ຄວາມບໍ່ຜາສຸກ ຕ້ອງອາບັຕິປາຈິຕຕີຍ໌

ອຸປສົມບັນ ພິກສຸນີບໍ່ແນ່ໃຈ ຈົງໃຈກໍ່ຄວາມບໍ່ຜາສຸກ ຕ້ອງອາບັຕິປາຈິຕຕີຍ໌

ອຸປສົມບັນ ພິກສຸນີສຳຄັນວ່າເປັນອນຸປສົມບັນ ຈົງໃຈກໍ່ຄວາມບໍ່ຜາສຸກ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກະຕະ**

ພິກສຸນີຈົງໃຈກໍ່ຄວາມບໍ່ຜາສຸກແກ່ອນຸປສົມບັນ ຕ້ອງອາບັຕິທຸກກະຕະ

ອນຸປສົມບັນ ພິກສຸນີສຳຄັນວ່າເປັນອຸປສົມບັນ ຕ້ອງອາບັຕິທຸກກະຕະ

ອນຸປສົມບັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ

ອນຸປສົມບັນ ພິກສຸນີສຳຄັນວ່າເປັນອນຸປສົມບັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໙໔໕] ໑. ພິກສຸນີບໍ່ປະສົງຄ໌ກໍ່ຄວາມບໍ່ຜາສຸກ ຂໍໂອກາສ ຈົງກົມ ຢືນ ນັ່ງນອນ ຍົກຂຶ້ນສະແດງ ເອງ ໃຊ້ຜູ້ອື່ນໃຫ້ຍົກຂຶ້ນສະແດງ ຫລືທ່ອງຈົ່ມຂ້າງຫນ້າ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໓ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໔ ນິທານວັຕຖຸ**

**໔. ຕຸວັຕຕວັຄ**

**ສິກຂາບົດທີ ໔**
ວ່າດ້ວຍການບໍ່ໃສ່ໃຈເບິ່ງແຍງເພື່ອນພິກສຸນີ

**ເຣື້ອງພິກສຸນີຖຸລລະນັນທາ**
[໙໔໖] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາບໍ່ເບິ່ງແຍງຊ່ວຍເຫລືອສຫຊີວິນີ໑ຜູ້ໄດ້ ຮັບຄວາມລຳບາກ ທັງບໍ່ໃສ່ໃຈມອບຫມາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫລືອ ບັນດາພິກສຸນີຜູ້ມັກ ນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງບໍ່ເບິ່ງແຍງ ຊ່ວຍເຫລືອສຫຊີວິນີ ຜູ້ໄດ້ຮັບຄວາມລຳບາກ ທັງບໍ່ໃສ່ໃຈມອບຫມາຍໃຫ້ຜູ້ອື່ນເບິ່ງແຍງ ຊ່ວຍເຫລືອ ລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**
ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາບໍ່ເບິ່ງແຍງຊ່ວຍເຫລືອສຫຊີວິນີຜູ້ ເດືອດຮ້ອນ ທັງບໍ່ໃສ່ໃຈມອບຫມາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫລືອ ແມ່ນແທ້ບໍ” ພິກສຸທັງ

ຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ"ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງບໍ່ເບິ່ງແຍງຊ່ວຍເຫລືອສຫຊີວິນີຜູ້ໄດ້ຮັບຄວາມລຳບາກ ທັງບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫລືອລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້

ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໙໔໗] ກໍພິກສຸນີໃດບໍ່ເບິ່ງແຍງຊ່ວຍເຫລືອ ຫລືບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນດູແລຊ່ວຍເຫລືອສຫຊີວິນີຜູ້ໄດ້ຮັບຄວາມລຳບາກ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຖຸລລະນັນທາ ຈົບ

**ໝາຍເຫດ :**

໑ ສຫຊີວິນີ ຄືພິກສຸນີຜູ້ທີ່ຕົນເປັນອຸປັຊຊາຍ໌ບວຊໃຫ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໙໔໘] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ທີ່ຊື່ວ່າ ຜູ້ໄດ້ຮັບຄວາມລຳບາກ ພຣະຜູ້ມີພຣະພາກຕຣັສໝາຍເຖິງຜູ້ເປັນໄຂ້
ທີ່ຊື່ວ່າ ສຫຊີວິນີ ຕຣັສໝາຍເຖິງສັທທິວິຫາຣິນີ
ຄຳວ່າ ບໍ່ເບິ່ງແຍງຊ່ວຍເຫລືອ ຄື ບໍ່ເບິ່ງແຍງຊ່ວຍເຫລືອດ້ວຍຕົນເອງ
ຄຳວ່າ ບໍ່ໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫລືອ ຄື ບໍ່ສັ່ງຜູ້ອື່ນ

ພິກສຸນີທອດຫູຣະວ່າ "ຈະບໍ່ເບິ່ງແຍງຊ່ວຍເຫລືອ ຈະບໍ່ໃສ່ໃຈມອບຫມາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫລືອ" ຕ້ອງອາບັຕິປາຈິຕຕິຍ໌

ພິກສຸນີບໍ່ເບິ່ງແຍງຊ່ວຍເຫລືອ ບໍ່ໃສ່ໃຈມອບຫມາຍໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫລືອອັນເຕວາສີນີ ຫລືອນຸປສັມບັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໔໙] ໑. ພິກສຸນີຜູ້ທອດຫູຣະເມື່ອມີອັນຕຣາຍ

໒. ພິກສຸນີຫາຜູ້ຊ່ວຍບໍ່ໄດ້

໓. ພິກສຸນີຜູ້ເປັນໄຂ້

໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໕. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ໝາຍເຫດ :**

໑ສຫຊີວິນີ ຄືພິກສຸນີຜູ້ທີ່ຕົນເປັນອຸປັຊຊາຍ໌ບວຊໃຫ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໕ ນິທານວັຕຖຸ**

**໔. ຕຸວັຕຕວັຄ**

**ສິກຂາບົດທີ ໕**

ວ່າດ້ວຍການດຶງແກ່ອອກ

**ເຣື້ອງພິກສຸນີຖຸລລະນັນທາ**

[໙໕໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພຣະພັທທາກາປິລານີຈຳພັນສາທີ່ເມືອງສາເກຕ ທ່ານສິ່ງທູຕໄປ

ສຳນັກຂອງພິກສຸນີຖຸລລະນັນທາດ້ວຍທູຣະບາງຢ່າງ ໃຫ້ແຈ້ງວ່າ“ຖ້າແມ່ເຈົ້າຖຸລລະນັນທາໃຫ້ທີ່ພັກ ຂະນ້ອຍຈະມາກຸງສາວັດຖີ” ພິກສຸນີຖຸລລະນັນທາກ່າວວ່າ “ເຊີນມາເຖີດ ຂະນ້ອຍຈະໃຫ້” ລຳດັບນັ້ນ ພຣະພັທທກາປິລານີຍ່າງທາງຈາກເມືອງສາເກຕໄປເຖິງກຸງສາວັດຖີ ພິກສຸນີຖຸລລະນັນທາໄດ້ໃຫ້ທີ່ ພັກແກ່ພຣະພັທທກາປິລານີ ສະໄໝນັ້ນ ພິກສຸນີຖຸລລະນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາ ມາດກ່າວທັມມີກຖາ ແມ່ນພຣະພັທທກາປິລານີກໍເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາ ມາດກ່າວທັມມີກຖາ ທັງທ່ານກໍໄດ້ຮັບສັຣເສີນວ່າ ມີຄຸນສົມບັຕຍິ່ງກວ່າຄົນທັງຫລາຍເຫັນວ່າ ພິກສຸນີພັທທກາປິລານີເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າສາມາດກ່າວທັມມີກຖາ ທັງທ່ານກໍໄດ້ ຮັບສັຣເສີນວ່າມີຄຸນສົມບັຕຍິ່ງກວ່າ ຈຶ່ງເຂົ້າໄປຫາພຣະເຖຣີກ່ອນແລ້ວໄປຫາພິກສຸນີຖຸລລະນັນທາ ພາຍຫລັງ ພິກສຸນີຖຸລລະນັນທາຮູ້ວ່າ “ທັມດາພິກສຸນີຜູ້ສາລະວນຢູ່ກັບການອພິປຣາຍເຣື່ອງຣາວໃຫ້ ຜູ້ອື່ນເຂົ້າໃຈ ຍ່ອມມັກນ້ອຍ ສົນໂດດຊອບສງັດ ບໍ່ເກືອກກົ້ວ” ຈຶ່ງໂກດ ຂັດໃຈ ດຶງແກ່ ພຣະພັທທກາປິລານີ ອອກຈາກຫ້ອງບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດ ເຈົ້າຖຸລລະນັນທາໃຫ້ທີ່ພັກແກ່ແມ່ເຈົ້າພັທທກາປິລານີແລ້ວໂກດ ຂັດໃຈ ດຶງແກ່ອອກໄປລະ”

ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໕ ສິກຂາບົທວິພັງຄ໌

### ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາໃຫ້ທີ່ພັກແກ່ພັທທກາປິລານີແລ້ວ ໂກດ ບໍ່ພໍໃຈ ດຶງແກ່ອອກໄປ ແມ່ນແທ້ບໍ່” ພິກສຸທັງຫລາຍທູລຮັບວ່າ“ແມ່ນແທ້ພຣະພຸດທະເຈົ້າ ຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກສຸທັງຫລາຍຈັ່ງໃດພິກສຸນີຖຸລລະນັນ ທາໃຫ້ທີ່ພັກແກ່ພັທທກາປິລານີແລ້ວໂກດ ບໍ່ພໍໃຈ ດຶງແກ່ອອກໄປລະພິກສຸທັງຫລາຍ ການກະທຳ ຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວ

ໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໙໕໑] ກໍພິກສຸນີໃດໃຫ້ທີ່ພັກແກ່ພິກສຸນີແລ້ວ ໂກດ ບໍ່ພໍໃຈ ດຶງແກ່ອອກໄປຫລືໃຊ້ໃຫ້ດຶງແກ່ອອກໄປ ຕ້ອງອາບັດປາຈິດຕີຍ໌

ເລື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໙໕໔] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄໍາວ່າ ແກ່ພິກສຸນີ ຄື ພິກສຸນີຮູບອື່ນ
ທີ່ຊື່ວ່າ ທີ່ພັກ ພຣະຜູ້ມີພຣະພາກຕຣັສຫມາຍເຖິງທີ່ພັກທີ່ມີປະຕູ
ຄໍາວ່າ ໃຫ້ ຄື ໃຫ້ດ້ວຍຕົນເອງ
ຄໍາວ່າ ໂກດ ບໍ່ພໍໃຈ ຄື ບໍ່ຊອບໃຈ ແຄ້ນໃຈ ເຈັບໃຈ
ຄໍາວ່າ ດຶງແກ່ ຄວາມວ່າ ຈັບໃນຫ້ອງແລ້ວດຶງແກ່ອອກມາຫນ້າຫ້ອງ ຕ້ອງອາບັດປາຈິດຕີຍ໌ ຈັບທີ່ຫນ້າຫ້ອງແລ້ວດຶງແກ່ອອກຂ້າງນອກ ຕ້ອງອາບັດປາຈິດຕີຍ໌ ພິກສຸນີສຸດລາກພົ້ນປະຕູຫລາຍປະຕູດ້ວຍຄວາມພຍາຍາມຄັ້ງດຽວ ຕ້ອງອາບັດປາຈິດຕີຍ໌
ຄໍາວ່າ ໃຊ້ໃຫ້ດຶງແກ່ ຄື ພິກສຸນີສັ່ງຜູ້ອື່ນ ຕ້ອງອາບັດປາຈິດຕີຍ໌ ຜູ້ຮັບຄໍາສັ່ງຄັ້ງດຽວແຕ່ສຸດອອກໄປພົ້ນຫລາຍປະຕູ ພິກສຸນີຜູ້ສັ່ງ ຕ້ອງອາບັດປາຈິດຕີຍ໌

**ບົທພາຊນີຍ໌**

**ຕິກປາຈິດຕີຍ໌**

[໙໕໕] ອຸປສັມບັນ ພິກສຸນີສໍາຄັນວ່າເປັນອຸປສັມບັນ ໃຫ້ທີ່ພັກແລ້ວໂກດ ບໍ່ພໍໃຈດຶງແກ່ຫລືໃຊ້ໃຫ້ດຶງແກ່ ຕ້ອງອາບັດປາຈິດຕີຍ໌
ອຸປສັມບັນ ພິກສຸນີບໍ່ແນ່ໃຈ ໃຫ້ທີ່ພັກແລ້ວໂກດ ບໍ່ພໍໃຈ ດຶງແກ່ຫລືໃຊ້ໃຫ້ດຶງແກ່ ຕ້ອງອາບັດ

ປາຈິຕຕີຍ໌

ອຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ໃຫ້ທີ່ພັກແລ້ວໂກດ ບໍ່ພໍໃຈ ສຸດລາກຫລືໃຊ້ໃຫ້ດຶງແກ່ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກະຕະ**

ຂີນ ຫລືໃຊ້ຜູ້ອື່ນໃຫ້ຂົນບໍຣິຂາຣຂອງທ່ານ ຕ້ອງອາບັຕິທຸກກະຕະ
ດຶງແກ່ ຫລືໃຊ້ຜູ້ອື່ນໃຫ້ດຶງແກ່ຈາກສະຖານທີ່ບໍ່ມີປະຕູ ຕ້ອງອາບັຕິທຸກກະຕະ
ຂີນ ຫລືໃຊ້ຜູ້ອື່ນໃຫ້ຂົນບໍຣິຂາຣຂອງທ່ານ ຕ້ອງອາບັຕິທຸກກະຕະ
ດຶງແກ່ ຫລືໃຊ້ຜູ້ອື່ນໃຫ້ດຶງແກ່ອນຸປສັມບັນ ຈາກທີ່ມີປະຕູຫລືບໍ່ມີປະຕູ ຕ້ອງອາບັຕິທຸກກະຕະ
ຂີນ ຫລືໃຊ້ຜູ້ອື່ນໃຫ້ຂົນບໍຣິຂາຣຂອງທ່ານ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກະຕະ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໔. ຕຸວັຕຕວັຄ ສິກຂາບົດທີ ៥ ອນາປັຕຕິວາຣ**

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໙໕໔] ໑. ພິກສຸນີດຶງແກ່ຫລືໃຊ້ຜູ້ອື່ນໃຫ້ດຶງແກ່ພິກສຸນີບໍ່ມີຄວາມລະອາຍ
໒. ພິກສຸນີຂນຫລືໃຊ້ຜູ້ອື່ນໃຫ້ຂົນບໍຣິຂາຣຂອງພິກສຸນີບໍ່ມີຄວາມລະອາຍນັ້ນ
໓. ພິກສຸນີດຶງແກ່ຫລືໃຊ້ຜູ້ອື່ນໃຫ້ດຶງແກ່ພິກສຸນີວິກົລຈິຕ
໔. ພິກສຸນີຂີນ ຫລືໃຊ້ຜູ້ອື່ນຂນບໍຣິຂາຣຂອງພິກສຸນີວິກົລຈິຕນັ້ນ
໕. ພິກສຸນີດຶງແກ່ຫລືໃຊ້ຜູ້ອື່ນໃຫ້ດຶງແກ່ພິກສຸນີຜູ້ກໍ່ຄວາມບາດຫມາງ . . . ກໍ່ກາຣຜິດຖຽງ . . . ກໍ່ກາຣວິວາທ. . . ກໍ່ຄວາມອືກກະທຶກ . . . ກໍ່ອທິກຣນ໌(ບັນຫາຂອງສົງຂ໌)ໃນສົງຂ໌
໖. ພິກສຸນີຂນຫລືໃຊ້ຜູ້ອື່ນໃຫ້ຂົນບໍຣິຂາຣຂອງພິກສຸນີຜູ້ກໍ່ຄວາມບາດຫມາງ. . . ກໍ່ກາຣຜິດຖຽງ . . . ກໍ່ກາຣວິວາທ . . . ກໍ່ຄວາມອືກກະທຶກ . . . ກໍ່ອທິກຣນ໌(ບັນຫາຂອງສົງຂ໌)ໃນສົງຂ໌ນັ້ນ

໗. ພິກສຸນີດຶງແກ່ຫລືໃຊ້ຜູ້ອື່ນໃຫ້ດຶງແກ່ອັນເຕວາສີນີຫລືສັທຫິວິຫາຣີນີ ຜູ້ປະພຶດບໍ່ຊອບ

໘. ພິກສຸນີຂັບຫລືໃຊ້ຜູ້ອື່ນໃຫ້ຂັບບໍ່ຣິຂາຣຂອງພິກສຸນີອັນເຕວາສີນີຫລືສັທຫິວິຫາຣີນີຜູ້ປະພຶດບໍ່ຊອບນັ້ນ

໙. ພິກສຸນີວິກົລຈິຕ

໑໐. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໖ ພຣະບັນຍັດ**

**໔. ຕຸວັຕຕວັຄ**

**ສິກຂາບົດທີ ໖**

ວ່າດ້ວຍການຢູ່ເກືອກກົ້ວກັບຄຣືຫັສຖ໌

**ເຣື້ອງພິກສຸນີຈັນທກາລີ**

[໙໕໕] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຈັນທກາລີຢູ່ເກືອກກົ້ວກັບຄຫບໍດີແດ່ ບຸຕຣຄຫບໍດີແດ່ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດແມ່ເຈົ້າຈັນທກາລີຈຶ່ງຢູ່ເກືອກກົ້ວກັບຄຫບໍດີແດ່ ບຸຕຣຄຫບໍດີແດ່ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງ ຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຈັນທກາລີຢູ່ເກືອກກົ້ວກັບຄຫບໍດີແດ່ ບຸຕຣຄຫບໍດີແດ່ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈັນທກາລີ ຈຶ່ງຢູ່ເກືອກກົ້ວກັບຄຫບໍດີແດ່ ບຸຕຣຄຫບໍດີແດ່ລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ

ໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໙໕໓] ກໍພິກສຸນີໃດຢູ່ເກືອກກົ້ວກັບຄຫບໍດີຫລືກັບບຸຕຣຄຫບໍດີ ພິກສຸນີນັ້ນອັນ ພິກສຸນີທັງຫລາຍຄວນວ່າກ່າວຕັກເຕືອນຢ່າງນີ້ວ່າ 'ນ້ອງຍິງ ທ່ານຢ່າຢູ່ເກືອກກົ້ວກັບຄຫບໍດີຫລືກັບບຸຕຣຄຫບໍດີ ນ້ອງຍິງຈົ່ງແຍກກັນຢູ່ເຖີດ ສົງຂ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງ' ກໍພິກສຸນີນັ້ນອັນພິກສຸນີທັງຫລາຍວ່າກ່າວຕັກເຕືອນຢ່າງນີ້ຍັງຢືນຢັນຢູ່ຢ່າງນັ້ນ ພິກສຸນີນັ້ນອັນພິກສຸນີທັງຫລາຍຄວນສວດສມນຸພາສນ໌ຈົນຄົບ ໓ ຄັ້ງເພື່ອໃຫ້ສລະເຣື້ອງນັ້ນ ຖ້າທ່ານກຳລັງຖືກສວດສມນຸພາສນ໌ກວ່າຈະຄົບ ໓ ຄັ້ງ ສລະເຣື້ອງນັ້ນໄດ້ ນັ້ນເປັນການດີ ຖ້າບໍ່ສລະ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຈັນທກາລີ ຈົບ

**ສິກຂາບົທວິພັງຄ໌**

[໙໕໗] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ເກືອກກົ້ວ ຄື ເກືອກກົ້ວກັນທາງກາຍແລະວາຈາທີ່ບໍ່ສົມຄວຣ
ທີ່ຊື່ວ່າ ຄຫບໍດີ ໄດ້ແກ່ ບຸຣຸສຜູ້ຄອງເຮືອນຄົນໃດຄົນນຶ່ງ
ທີ່ຊື່ວ່າ ບຸຕຣຄຫບໍດີ ໄດ້ແກ່ ບຸຕຣແລະອ້າຍນ້ອງຊາຍຄົນໃດຄົນນຶ່ງ
ຄຳວ່າ ພິກສຸນີນັ້ນ ໄດ້ແກ່ ພິກສຸນີຜູ້ຢູ່ເກືອກກົ້ວຄົນໃດຄົນນຶ່ງ
ຄຳວ່າ ອັນພິກສຸນີທັງຫລາຍ ໄດ້ແກ່ ພິກສຸນີພວກອື່ນ
ພິກສຸນີຜູ້ໄດ້ເຫັນໄດ້ຊາບຄວນວ່າກ່າວຕັກເຕືອນພິກສຸນີຜູ້ເກືອກກົ້ວວ່າ "ນ້ອງຍິງທ່ານຢ່າຢູ່ເກືອກກົ້ວກັບຄຫບໍດີຫລືກັບບຸຕຣຄຫບໍດີ ນ້ອງຍິງຈົງແຍກກັນຢູ່ເຖີດ ສົງຂ໌ຍ່ອມສັຣເສີນການແຍກກັນຢູ່ຂອງນ້ອງຍິງເທົ່ານັ້ນ" ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ່ ໒
ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສລະໄດ້ ນັ້ນເປັນການດີ ຖ້າບໍ່ສລະ ຕ້ອງອາບັຕິທຸກກະຕະ ພິກສຸນີຜູ້ຊາບເຣື່ອງແລ້ວບໍ່ວ່າກ່າວຕັກເຕືອນ ຕ້ອງອາບັຕິທຸກກະຕະ ພິກສຸນີນັ້ນອັນພິກສຸນີທັງຫລາຍຄວນນຳຕົວມາສູ່ທ່າມກາງສົງຂ໌ວ່າກ່າວຕັກເຕືອນວ່າ "ນ້ອງຍິງທ່ານຢ່າຢູ່ເກືອກກົ້ວ

ກັບຄຫບໍດີຫລືກັບບຸຕຣຄຫບໍດີ ນ້ອງຍິງຈົງແຍກກັນຢູ່ ສົງຊ໌ຍ່ອມສັຣເສີນການແຍກກັນຢູ່ຂອງ
ນ້ອງຍິງເທົ່ານັ້ນ” ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໔

ຄວນວ່າກ່າວຕັກເຕືອນທ່ານແມ່ນຄັ້ງທີ ໓ ຖ້າທ່ານສລະໄດ້ ນັ້ນເປັນການດີ ຖ້າບໍ່ສລະ ຕ້ອງອາບັຕິ
ທຸກກະຕະ ສົງຊ໌ຄວນສວດສມນຸພາສນ໌ພິກສຸນີນັ້ນ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໔. ຕຸວັຕຕວັດ ສິກຂາບົດທີ ໕ ບິຫພາຂຸນີຍ໌**

**ວິທີສວດສມນຸພາສນ໌ແລະກັມວາຈາສວດສມນຸພາສນ໌**

ພິກສຸທັງຫລາຍ ສົງຊ໌ຄວນສວດສມນຸພາສນ໌ຢ່າງນີ້ ຄື ພິກສຸນີຜູ້ສລາດສາມາດຄວນປະກາດ
ໃຫ້ສົງຊ໌ຊາບດ້ວຍຍັຕຕິຈຕຸຕຖກັມວາຈາວ່າ

[໙໕໗] ແມ່ເຈົ້າ ຂໍສົງຊ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີຊື່ນີ້ຢູ່ເກືອກກົ້ວກັບຄຫບໍດີແດ່ກັບບຸຕຣຄຫບໍດີແດ່
ທ່ານຍັງບໍ່ສລະເຣື້ອງນັ້ນ ຖ້າສົງຊ໌ພ້ອມກັນແລ້ວຄວນສວດສມນຸພາສນ໌ ພິກສຸນີຊື່ນີ້ເພື່ອໃຫ້ສລະ
ເຣື້ອງນັ້ນ ນີ້ເປັນຍັຕຕິແມ່ເຈົ້າ ຂໍສົງຊ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີຊື່ນີ້ຢູ່ເກືອກກົ້ວກັບຄຫບໍດີແດ່ ກັບ
ບຸຕຣ ຄຫບໍດີແດ່ ທ່ານຍັງບໍ່ສລະເຣື້ອງນັ້ນ ສົງຊ໌ສວດສມນຸພາສນ໌ພິກສຸນີຊື່ນີ້ເພື່ອໃຫ້ສລະເຣື້ອງ
ນັ້ນ ແມ່ເຈົ້າຮູບໃດເຫັນດ້ວຍກັບການສວດສມນຸພາສນ໌ພິກສຸນີຊື່ນີ້ ເພື່ອໃຫ້ສລະເຣື້ອງນັ້ນ ແມ່ເຈົ້າ
ຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງ ຂ້າພະເຈົ້າກ່າວຄວາມນີ້
ແມ່ນຄັ້ງທີ ໔ ຯລຯ ຂ້າພະເຈົ້າກ່າວຄວາມນີ້ແມ່ນຄັ້ງທີ ໓ ຯລຯ ພິກສຸນີຊື່ນີ້ສົງຊ໌ສວດສມນຸພາສນ໌
ແລ້ວເພື່ອໃຫ້ສລະເຣື້ອງນັ້ນ ສົງຊ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນ
ເປັນມະຕິຢ່າງນີ້” ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິທຸກກະຕະ ໔
ຕົວ

ຈົບກັມວາຈາຄັ້ງສຸດທ້າຍ ຕ້ອງອາບັຕິປາຈິຕຕີຍ໌

**ບິຫພາຂຸນີຍ໌**

**ຕິກປາຈິຕຕີຍ໌**

[໙໕໘] ກັມທີ່ທຳຖືກຕ້ອງ໑ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບໍ່ສລະ ຕ້ອງອາບັຕິປາຈິຕຕີຍ໌

ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບໍ່ສລະ ຕ້ອງອາບັຕິປາຈິຕຕີຍ໌
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ບໍ່ຖືກຕ້ອງ ບໍ່ສລະ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ກັມທີ່ທຳຖືກຕ້ອງ ຫມາຍເຖິງກັມອາຈາສວດສມນຸພາສນ໌ດັ່ງກ່າວຂ້າງຕົ້ນ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໓ ອນາປັຕຕິວາຣ

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໙໓໐] ໑. ພິກສຸນີຍັງບໍ່ຖືກສົງຊ໌ສວດສມນຸພາສນ໌
໒. ພິກສຸນີຍອມສລະ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໓ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໗ ນິທານວັຕຖຸ

## ໔. ຕຸວັຕຕວັຄ

**ສິກຂາບົດທີ ໗**

ວ່າດ້ວຍການທ່ຽວຈາຣິກໄປໃນທີ່ທີ່ຫນ້າຫວາດຣະແວງພາຍໃນຣັຖ

## ເຣື້ອງພິກສຸນີຫລາຍຮູບ

[ລຝ໑] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍທຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນ ໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານພາຍໃນຣັຖ ພວກນັກເລງຂົ່ມຂືນ(ພິກສຸນີເຫລົ່ານັ້ນ) ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງທຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນ ໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານພາຍໃນຣັຖລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີທຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານພາຍໃນຣັຖ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງທຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານພາຍໃນຣັຖລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຣັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[ລຝ໔] ກໍພິກສຸນີໃດທຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານພາຍໃນຣັຖ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໗ ອນາປັຕຕິວາຣ

**ສິກຂາບົທວິພັງຄ໌**

[ລຝ໓] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ພາຍໃນຣັຖ ຄື ໃນຣັຖທີ່ຕົນອາສັຍຢູ່

ທີ່ຊື່ວ່າ ຫນ້າຫວາດຣະແວງ ຄື ໃນຫົນທາງນັ້ນ ປາກົດທີ່ຢູ່ ປາກົດທີ່ກິນ ປາກົດທີ່ຢືນ ປາກົດທີ່ນັ່ງ ປາກົດທີ່ນອນຂອງພວກໂຈຣ

ທີ່ຊື່ວ່າ ມີພັຍຫນ້າຢ້ານ ຄື ໃນຫົນທາງນັ້ນ ປາກົດມີມະນຸສຍ໌ຖືກພວກໂຈຣຂ້າ ປາກົດມີມະນຸສຍ໌ຖືກປຸ້ນ ປາກົດມີມະນຸສຍ໌ຖືກທຸບຕີ

ທີ່ຊື່ວ່າ ບໍ່ມີກອງກວຽນເປັນເພື່ອນ ຄື ເວັ້ນກອງກວຽນ

ຄຳວ່າ ທຽວຈາຣິກໄປ ຄື ທຽວຈາຣິກໄປໃນຫມູ່ບ້ານມີກຳຫນົດຣະຍະຊົ່ວໄກ່ບິນຕົກ ຕ້ອງອາບັຕິປາຈິຕຕິຍ໌ທຸກໆບໍຣິເວນຫມູ່ບ້ານ ທຽວຈາຣິກໄປໃນປ່າບໍ່ມີຫມູ່ບ້ານ ຕ້ອງອາບັຕິປາຈິຕຕິຍ໌ທຸກໆເຄິ່ງໂຍຊນ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[ລຝ໔] ໑. ພິກສຸນີໄປກັບກອງກວຽນ

໒. ພິກສຸນີໄປໃນສະຖານທີ່ປອດພັຍ

໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໗ ນິທານວັຕຖຸ**

**໔. ຕຸວັຕຕວັຄ**

## ສິກຂາບົດທີ ໗

ວ່າດ້ວຍການທ່ຽວຈາຣິກໄປໃນທີ່ທີ່ຫນ້າຫວາດຣະແວງພາຍນອກວັດ

## ເຣື້ອງພິກສຸນີຫລາຍຮູບ

[໔໒໕] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ ທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນ ໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານພາຍນອກວັດ ພວກນັກເລງຂົ່ມຂືນ(ພິກສຸນີເຫລົ່ານັ້ນ) ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານພາຍນອກວັດລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານພາຍນອກວັດ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ"ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານພາຍນອກວັດລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໔໒໒] ກໍພິກສຸນີໃດທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນ ໃນທີ່ທີ່ຮູ້ກັນວ່າຫນ້າຫວາດຣະແວງ ມີພັຍຫນ້າຢ້ານ ພາຍນອກວັດ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໗ ອນາປັຕຕິວາຣ

### ສິກຂາບົທວິພັງຄ໌

[໙໓໗] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ຄຳວ່າ ພາຍນອກຣັຖ ຄື ໃນຣັຖຂອງຝ່າຍອື່ນນອກຈາກຣັຖທີ່ຕົນອາສັຍຢູ່
ທີ່ຊື່ວ່າ ໜ້າຫວາດຣະແວງ ຄື ໃນຫົນທາງນັ້ນ ປາກົດທີ່ຢູ່ ປາກົດທີ່ກິນ ປາກົດ
ທີ່ຢືນ ປາກົດທີ່ນັ່ງ ປາກົດທີ່ນອນຂອງພວກໂຈຣ
ທີ່ຊື່ວ່າ ມີພັຍໜ້າຢ້ານ ຄື ໃນຫົນທາງນັ້ນ ປາກົດມີຄົນທັງຫລາຍຖືກພວກໂຈຣຂ້າປາກົດມີຄົນຖືກປຸ້ນ ປາກົດມີຄົນຖືກທຸບຕີ
ທີ່ຊື່ວ່າ ບໍ່ມີກອງກວຽນເປັນເພື່ອນ ຄື ເວັ້ນກອງກວຽນ
ຄຳວ່າ ທ່ຽວຈາຣິກໄປ ຄື ທ່ຽວຈາຣິກໄປໃນໝູ່ບ້ານມີກຳໜົດຣະຍະຊົ່ວໄກ່ບິນຕົກ ຕ້ອງອາບັຕິປາຈິຕຕີຍ໌ທຸກໆບໍຣິເວນໝູ່ບ້ານ ທ່ຽວຈາຣິກໄປໃນປ່າບໍ່ມີໝູ່ບ້ານ ຕ້ອງອາບັຕິປາຈິຕຕີຍ໌ທຸກໆເຄິ່ງໂຍຊນ໌

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໓໘] ໑. ພິກສຸນີໄປກັບກອງກວຽນ

໒. ພິກສຸນີໄປໃນສະຖານທີ່ປອດພັຍ ບໍ່ມີພັຍໜ້າຢ້ານ

໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໙ ນິທານວັຕຖຸ

## ໔. ຕຸວັຕຕວັຄ

### ສິກຂາບົດທີ ໙

ວ່າດ້ວຍການທ່ຽວຈາຣິກໄປພາຍໃນພັນສາ

### ເຣື້ອງພິກສຸນີຫລາຍຮູບ

[໙໖໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເວຊຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດກຸງຣາຊຄຶຫ໌ ຄັ້ງນັ້ນ ພວກພິກສຸນີພາກັນທ່ຽວຈາຣິກໄປພາຍໃນພັນສາ ຄົນທັງຫລາຍຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງທ່ຽວໄປພາຍໃນພັນສາ ຢຽບຍ່ຳຂອງຂຽວ ແລະຫຍ້າ ບຽດບຽນຊີວິດຊຶ່ງມີອິນທຣີຍ໌ດຽວ ທຳລາຍສັຕວ໌ເລັກນ້ອຍເປັນຈຳນວນຫລາຍລະ" ພິກສຸນີທັງຫລາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງທ່ຽວຈາຣິກໄປພາຍໃນພັນສາລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີທ່ຽວຈາຣິກໄປພາຍໃນພັນສາ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງທ່ຽວໄປພາຍໃນພັນສາລະ ພິກສຸທັງຫລາຍການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໙໗໐] ກໍພິກສຸນີໃດທ່ຽວຈາຣິກໄປພາຍໃນພັນສາ ຕ້ອງອາບັຕິປາຈິຕຕິຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໙ ອນາປັຕຕິວາຣ

### ສິກຂາບົທວິພັງຄ໌

[ໜ໗໑] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ພາຍໃນພັນສາ ຄື ບໍ່ຢູ່ຕລອດພັນສາຕົ້ນ ໓ ເດືອນ ຫລືຕລອດພັນສາຫລັງ ໓ ເດືອນ
ຄຳວ່າ ທ່ຽວຈາຣິກໄປ ຄື ທ່ຽວຈາຣິກໄປໃນຫມູ່ບ້ານມີກຳຫນົດຣະຍະຊົ່ວໄກ່ບິນຕົກ ຕ້ອງອາບັຕິປາຈິຕຕີຍ໌ທຸກໆບໍຣິເວນຫມູ່ບ້ານ ທ່ຽວຈາຣິກໄປໃນປ່າບໍ່ມີຫມູ່ບ້ານ ຕ້ອງອາບັຕິປາຈິຕຕີຍ໌ທຸກໆເຄິ່ງໂຍຊນ໌

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[ໜ໗໔] ໑. ພິກສຸນີໄປດ້ວຍສັຕຕາຫກໍຣນີຍະ໑
໔. ພິກສຸນີຖືກອິບກວນຈຶ່ງໄປ
໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໙ ຈົບ

**ໝາຍເຫດ :**

໑ "ສັຕຕາຫກໍຣນີຍະ" ຄືທຸຣະທີ່ຄວນທຳເສັດໄດ້ໃນເວລາ ໗ ວັນ ຫມາຍເຖິງທຸຣະເປັນເຫຕຸໃຫ້ພິກສຸອອກຈາກວັດໄປຄ້າງຄືນທີ່ອື່ນໄດ້ ແຕ່ຕ້ອງກັບມາພາຍໃນເວລາ ໗ ວັນ ເປັນທຸຣະທີ່ພິກສຸພິກສຸນີ ສິກຂມານາ ສາມເນຣ ສາມເນຣີ ອຸບາສົກ ອຸບາສິກາສົ່ງຂ່າວມານິມົນຕ໌ໄປ ເຊັ່ນໄປເພື່ອ

ພຍາບາລພິກສຸແລະພິກສຸນີເປັນຕົ້ນ(ສູຫາຫູຣຣມິກ) ຫລືມາຣດາບິດາໄປເພື່ອຣະງັບເພື່ອນພິກສຸ ເປັນຕົ້ນຜູ້ກະສັນຈະສຶກ ໄປເພື່ອກິຈຂອງສົງຂ໌ ເຊັ່ນສ້າງວິຫາຣຫລືສ້ອມວິຫາຣທີ່ເປ່ເພ ໄປກິຈນິມົນຕ໌ (ດູ. ວິ. ມ. ໔/໑໗໗-໒໐໒/໔໐໕-໔໔໔)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໑໐ ນິທານວັຕຖຸ

**໔. ຕຸວັຕຕວັຄ**

**ສິກຂາບົດທີ ໑໐**
ວ່າດ້ວຍການບໍ່ຫລີກຈາຣິກໄປ

**ເຣື້ອງພິກສຸນີຫລາຍຮູບ**
[໙໗໘] ສະມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າ ປະທັບຢູ່ ນະ ພຣະເວຣຸວັນສະຖານທີ່ໃຫ້ເຫຍື່ອກະແຕ ເຂຕກຸງຣາຊຄຶຫ໌ ຄັ້ງນັ້ນ ພວກພິກສຸນີຢູ່ຈຳພັນສາໃນເມືອງຣາຊຄຶຫ໌ນັ້ນແຫລະຕລອດຣະດູຝົນ ຢູ່ໃນເມືອງຣາຊຄຶຫ໌ນັ້ນຕລອດຣະດູຫນາວ ຢູ່ໃນເມືອງຣາຊຄຶຫ໌ນັ້ນຕລອດຣະດູຮ້ອນ ຄົນທັງຫລາຍຕຳຫນິ ປະນາມ ໂພນທະນາວ່າ "ທິສທັງຫລາຍຄັງຄັບແຄບມືດມົນສຳລັບພິກສຸນີ ພິກສຸນີເຫລົ່ານີ້ຈຶ່ງເບິ່ງບໍ່ເຫັນທິສທາງ" ພິກສຸນີທັງຫລາຍໄດ້ຍິນຊາວບ້ານຕຳຫນິ ປະນາມ ໂພນທະນາ ລຳດັບນັ້ນພິກສຸນີເຫລົ່ານັ້ນຈຶ່ງບອກເຣື້ອງນີ້ໃຫ້ພິກສຸທັງຫລາຍຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**
ລຳດັບນັ້ນ ພຣະຜູ້ມີພຣະພາກຊົງສະແດງທັມມີກຖາເພາະເຣື້ອງນີ້ເປັນຕົ້ນເຫຕຸ ຮັບສັ່ງກັບພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ເພາະເຫຕຸນັ້ນ ເຮົາຈະບັນຍັດສິກຂາບົທແກ່ພິກສຸນີທັງຫລາຍ ໂດຍອາສັຍອຳນາຈປໂຍດ ໑໐ ປະການ ຄື
໑. ເພື່ອຄວາມຮັບວ່າດີແຫ່ງສົງຂ໌
ฯລฯ
໑໐. ເພື່ອຄວາມຕັ້ງຫມັ້ນແຫ່ງສັທທັມ

໑໐. ເພື່ອເອື້ອເຟື້ອວິນັຍ
ພິກສຸທັງຫລາຍ ກໍພິກສຸນີທັງຫລາຍຄວນຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໔. ຕຸວັຕຕວັຄ ສິກຂາບົດທີ ໑໐ ອນາປັຕຕິວາຣ**

**ພຣະບັນຍັດ**

[໙໗໔] ກໍພິກສຸນີໃດຈຳພັນສາແລ້ວ ບໍ່ຫລີກຈາຣິກໄປ ໂດຍທີ່ສຸດແມ່ນສິ້ນຣະຍະທາງ ໕-໖ ໂຍຊນ໌ ຕ້ອງອາບັຕິປາຈິຕຕີຍ໌໑

ເຣື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໙໗໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ຈຳພັນສາແລ້ວ ຄື ຢູ່ຈຳພັນສາຕົ້ນ ໓ ເດືອນ ຫລືຕລອດພັນສາຫລັງ ໓ ເດືອນ ພອທອດທຸຣະວ່າ "ເຮົາຈະບໍ່ຫລີກຈາຣິກໄປໂດຍທີ່ສຸດແມ່ນສິ້ນຣະຍະທາງ ໕-໖ ໂຍຊນ໌" ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໙໗໖] ໑. ພິກສຸນີບໍ່ຈາຣິກໄປເມື່ອມີອັນຕຣາຍ
໒. ພິກສຸນີແສວງຫາພິກສຸນີຜູ້ເປັນເພື່ອນບໍ່ໄດ້
໓. ພິກສຸນີເປັນໄຂ້
໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໕. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ

ຕຸວັຕຕວັຄທີ ໔ ຈົບ

ໝາຍເຫດ :
໑ ພິກສຸນີອອກພັນສາແລ້ວ ຍ່າງທາງໄປໄດ້ພຽງ ໓ ໂຍຊນ໌ແລ້ວກັບສຳນັກເດີມໂດຍໃຊ້ເສັ້ນທາງໃຫມ່ ນັບວ່າໄດ້ຫລີກຈາຣິກໄປສິ້ນຣະຍະທາງ ໖ ໂຍຊນ໌ (ກງ໌ຂາ. ອ. ໓໗໓)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໑ ນິທານວັຕຖຸ**

**໕. ຈິຕຕາຄາຣວັຄ**
ຫມວດວ່າດ້ວຍຫໍຈິຕຣກັມ

**ສິກຂາບົດທີ ໑**
ວ່າດ້ວຍກາຣໄປເບິ່ງໂຮງລະຄຣຫລວງ

**ເຣື້ອງພິກສຸນີສັພພັຄຄີຍ໌**
[໓໗໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ທີ່ພຣະຣາຊອຸທຍານຂອງພຣະເຈົ້າປເສນທິໂກສົລ ມີກາຣສະແດງພາພຈິຕຣກັມ ນະ ຫໍຈິຕຣກັມ ຄັ້ງນັ້ນ ຄົນທັງຫລາຍພາກັນໄປເບິ່ງຫໍຈິຕຣກັມ ແມ່ນພວກພິກສຸນີສັພພັຄຄີຍ໌ກໍໄປເບິ່ງຫໍຈິຕຣກັມ ຄົນທັງຫລາຍຕໍາຫນິປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີຈຶ່ງໄປເບິ່ງຫໍຈິຕຣກັມເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ” ພິກສຸນີທັງຫລາຍໄດ້ຍິນຊາວບ້ານຕໍາຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີຈຶ່ງໄປເບິ່ງຫໍຈິຕຣກັມລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**
ລໍາດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ

ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ໄປເບິ່ງຫໍຈິຕຣກັມ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໄປເບິ່ງຫໍຈິຕຣກັມລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[ລ໗໘] ກໍພິກສຸນີໃດໄປເບິ່ງໂຮງລະຄອຫລວງ ຫໍຈິຕຣກັມ ສວນສາທາຣນະ ອຸທຍານຫລືສຣະໂບກຂຣນີ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີສັພພັຄຄີຍ໌ ຈົບ

**ສິກຂາບົທວິພັງຄ໌**

[ລ໗໙] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ວ່າ ພິກສຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ໂຮງລະຄອຫລວງ ໄດ້ແກ່ ສະຖານທີ່ທີ່ເຂົາສ້າງຂຶ້ນໄວ້ ນະທີ່ໃດທີ່ນຶ່ງເພື່ອຖວາຍພຣະຣາຊາຊົງກີຣາ ເພື່ອໃຫ້ຊົງສຳບາຍພຣະທັຍ

ທີ່ຊື່ວ່າ ຫໍຈິຕຣກັມ ໄດ້ແກ່ ຫອທີ່ສ້າງຂຶ້ນ ນະທີ່ໃດທີ່ນຶ່ງເພື່ອໃຫ້ຄົນທັງຫລາຍຊົມຫລິ້ນ ມ່ວນຊື່ນ

ທີ່ຊື່ວ່າ ສວນສາທາຣນະ ໄດ້ແກ່ ສວນທີ່ສ້າງຂຶ້ນໃຫ້ຄົນທັງຫລາຍຊຸມຫລິ້ນ ມ່ວນຊື່ນ

ທີ່ຊື່ວ່າ ອຸທຍານ ໄດ້ແກ່ ອຸທຍານທີ່ສ້າງຂຶ້ນ ນະທີ່ໃດທີ່ນຶ່ງເພື່ອໃຫ້ຄົນທັງຫລາຍຊົມຫລິ້ນ ມ່ວນຊື່ນ

ທີ່ຊື່ວ່າ ສຣະໂບກຂຣນີ ໄດ້ແກ່ ສະນ້ຳທີ່ຂຸດໄວ້ ນະທີ່ໃດທີ່ນຶ່ງເພື່ອໃຫ້ຄົນທັງຫລາຍຊົມຫລິ້ນ ມ່ວນຊື່ນ

[ລ໘໐] ພິກສຸນີຍ່າງໄປເພື່ອຈະດູ ຕ້ອງອາບັຕິທຸກກະຕະ ຢືນເບິ່ງ ຕ້ອງອາບັຕິປາຈິຕຕີຍ໌໑ ພົ້ນສາຍຕາໄປແລ້ວຫລຽວກັບມາດູອີກ ຕ້ອງອາບັຕິປາຈິຕຕີຍ໌ ຍ່າງເພື່ອຈະໄປເບິ່ງແຕ່ລະແຫ່ງ ຕ້ອງ

ອາບັຕິທຸກກະຕະ ຢືນເບິ່ງ ຕ້ອງອາບັຕິປາຈິຕຕິຍ໌ ພົ້ນສາຍຕາໄປແລ້ວຫລຽວກັບມາດູອີກ ຕ້ອງ ອາບັຕິປາຈິຕຕິຍ໌

**ໝາຍເຫດ :**
໑ ຢືນຢູ່ໃນທີ່ແຫ່ງດຽວ ເບິ່ງດູສະຖານທີ່ທັງ ໕ ບ່ອນມີໂຮງລະຄອນຫລວງເປັນຕົ້ນ ໂດຍບໍ່ກ້າວ ຍ່າງໄປໃສ ຕ້ອງອາບັຕິ
ປາຈິຕຕິຍ໌ ໑ ຕົວ ຖ້າຫັນໄປເບິ່ງດູສະຖານທີ່ເຫລົ່ານັ້ນຊຶ່ງຕັ້ງຢູ່ໃນທີ່ຕ່າງໆ ຕ້ອງອາບັຕິປາຈິຕຕິຍ໌ ຕາມຈຳນວນສະຖານ ທີ່ເບິ່ງດູ (ວິ. ອ. ໔/ລ໗໗/໕໐໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໑ ອນາປັຕຕິ ວາຣ**

**ອນາປັຕຕິວາຣ**
ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[ລ໗໑] ໑. ພິກຂຸນີຢືນຢູ່ທີ່ສວນສາທາຣນະເບິ່ງເຫັນ
໔. ພິກຂຸນີຍ່າງໄປຍ່າງມາເບິ່ງເຫັນ
໖. ພິກຂຸນີມີທຸຣະຍ່າງໄປເຫັນ
໔. ພິກຂຸນີຜູ້ມີເຫຕຸຂັດຂ້ອງ
໕. ພິກຂຸນີວິກົລຈິຕ
໖. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໔ ນິທານ ວັຕຖຸ**

**໕. ຈິຕຕາຄາຣວັຄ**

**ສິກຂາບົດທີ ໔**
ວ່າດ້ວຍການໃຊ້ຕັ່ງຫລືແທ່ນ

**ເລື້ອງພິກຂຸນີຫລາຍຮູບ**
[ໝ໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນ ທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ພິກຂຸນີທັງຫລາຍໃຊ້ຕັ່ງຍາວແດ່ ແທ່ນແດ່ ຄົນທັງຫລາຍ ທ່ຽວຈາຣິກໄປຕາມວິຫາຣເຫັນແລ້ວຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸນີຈຶ່ງ ໃຊ້ຕັ່ງຍາວແດ່ ແທ່ນແດ່ ເໝືອນຍິງຄຶຫັສຖ໌ຜູ້ບໍຣິໂພຄກາມລະ" ພິກຂຸນີທັງຫລາຍໄດ້ຍິນ ຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກນ້ອຍ ฯລฯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸນີຈຶ່ງໃຊ້ຕັ່ງຍາວແດ່ ແທ່ນແດ່ລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນ ໄດ້ນຳເລື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະ ພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**
ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸ ທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພວກພິກຂຸນີໃຊ້ຕັ່ງຍາວແດ່ ແທ່ນແດ່ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ວ່າ "ฯລฯ ພິກຂຸທັງຫລາຍ ຈັ່ງໃດພວກພິກຂຸນີຈຶ່ງໃຊ້ຕຽງແດ່ ຕັ່ງແດ່ລະ ພິກຂຸທັງຫລາຍ ການ ກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມ ໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ฯລฯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກ ຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**
[ໝ໗໕] ກໍພິກຂຸນີໃດໃຊ້ຕັ່ງຍາວຫລືແທ່ນ ຕ້ອງອາບັຕິປາຈິຕຕິຍ໌

ເລື້ອງພິກຂຸນີຫລາຍຮູບ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໔ ອນາປັຕຕິ ວາຣ**

**ສິກຂາບົທວິພັງຄ໌**

[໙໗໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຕັ່ງຍາວ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຕັ່ງທີ່ເກີນຂນາດ

ທີ່ຊື່ວ່າ ແຫ່ນ ໄດ້ແກ່ ແຫ່ນທີ່ຖັກດ້ວຍຂົນສັຕວ໌ທີ່ຕົນຫາມາ

ຄຳວ່າ ໃຊ້ ຄື ນັ່ງຫລືນອນເທິງຕັ່ງຍາວ ຫລືເທິງແຫ່ນນັ້ນ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໙໗໕] ໑. ພິກສຸນີຕັດຕີນຕັ່ງຍາວແລ້ວຈຶ່ງໃຊ້

໒. ພິກສຸນີຣື້ອຂົນສັຕວ໌ຂອງແຫ່ນແລ້ວຈຶ່ງໃຊ້

໓. ພິກສຸນີວິກົລຈິຕ

໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໓ ພຣະບັນຍັດ**

**໕. ຈິຕຕາຄາຣວັຄ**

**ສິກຂາບົດທີ ໓**

ວ່າດ້ວຍກາຣກໍ້ດ້າຍ

**ເຣື້ອງພິກສຸນີສັພພັຄຄີຍ໌**

[໙໗໖] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ກໍ້ດ້າຍຢູ່ ຄົນທັງຫລາຍທຽວຈາຣິກໄປຕາມວິຫາຣເຫັນແລ້ວຈຶ່ງຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງກໍ້ດ້າຍ

ເໝືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ” ພິກສຸນີທັງຫລາຍໄດ້ຍິນຊາວບ້ານຕໍາໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງກໍ້ດ້າຍລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ກໍ້ດ້າຍແມ່ນແທ້ບໍ” ພິກສຸທັງຫລາຍທູລຮັບວ່າ “ແມ່ນແທ້ພຣະພຸດທະເຈົ້າຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ “ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງກໍ້ດ້າຍລະ ພິກສຸທັງຫລາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໙໘໘] ກໍພິກສຸນີໃດກໍ້ດ້າຍ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີສັພພັຄຄີຍ໌ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໖ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໙໘໙] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ທີ່ຊື່ວ່າ ດ້າຍ ໄດ້ແກ່ດ້າຍ ໖ ຊນິດ ຄື ດ້າຍເປືອກໄມ້ ດ້າຍຝ້າຍ ດ້າຍໄໝດ້າຍຂົນສັຕວ໌ ດ້າຍປ່ານ ດ້າຍທີ່ໃຊ້ວັຕຖຸເຈືອກັນ

ຄຳວ່າ ກໍ້ ຄື ກໍ້ເອງ ຕ້ອງອາບັດທຸກກະຕະໃນຂນະທີ່ກໍ້ ຕ້ອງອາບັດປາຈິຕຕິຍ໌ ທຸກໆຂນະທີ່ມ້ວນເຂົ້າມາ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໙໗໙] ໑. ພິກສຸນີ ກໍ້ດ້າຍທີ່ຜູ້ອື່ນກໍ້ໄວ້

໔. ພິກສຸນີວິກິລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໓ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໔ ນິທານວັຕຖຸ**

**໕. ຈິຕຕາຄາຣວັຄ**

**ສິກຂາບົດທີ ໔**

ວ່າດ້ວຍການຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌

**ເຣື້ອງພິກສຸນີຫລາຍຮູບ**

[໙໙໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌ລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີຊ່ວຍທຳການຂົນຂວາຍເພື່ອຄຣືຫັສຖ໌ ແມ່ນ

ແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຊ່ອຍທຳການຂົນຂວາຍເພື່ອຄຣືຫັສຖ໌ລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໘໘໑] ກໍພິກສຸນີໃດຊ່ອຍທຳການຂົນຂວາຍເພື່ອຄຣືຫັສຖ໌ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໘໘໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຊ່ອຍທຳການຂົນຂວາຍເພື່ອຄຣືຫັສຖ໌ ຄື ຕົ້ມເຂົ້າຕົ້ມ ຫຸງພັຕຕາຫານຫລືທຳຂອງຄ້ຽວ ຊັກຜ້ານຸ່ງຫລືຜ້າໂພກເພື່ອຄຣືຫັສຖ໌ ຕ້ອງອາບັຕິປາຈິຕຕິຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໘໘໖] ໑. ພິກສຸນີຕົ້ມເຂົ້າປຽກ ຈັດນ້ຳປານະຖວາຍສົງຂ໌

໒. ພິກສຸນີຫຸງເຂົ້າຖວາຍສົງຂ໌

໓. ພິກສຸນີທຳການບູຊາເຈດີຍ໌

໔. ພິກສຸນີຕົ້ມເຂົ້າປຽກ ຫຸງພັຕຕາຫານຫລືທຳຂອງຄ້ຽວ ຊັກຜ້ານຸ່ງຜ້າຫົ່ມຫລືຜ້າໂພກໃຫ້ໄວຍາວັຈກອນຂອງຕົນ

໕. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໕ ນິທານວັຕຖຸ**

**໕. ຈິຕຕາຄາຣວັຄ**

**ສິກຂາບົດທີ ໕**
ວ່າດ້ວຍການບໍ່ຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌)

**ເຣື້ອງພິກສຸນີຖຸລລະນັນທາ**
[໙໙໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຮູບນຶ່ງເຂົ້າໄປຫາພິກສຸນີຖຸລລະນັນທາກ່າວວ່າ "ແມ່ເຈົ້າໄປຣດມາຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌)ນີ້ດ້ວຍເຖີດ" ພິກສຸນີຖຸລລະນັນທາຮັບປາກແຕ່ບໍ່ຊ່ວຍຣະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບ ລຳດັບນັ້ນ ພິກສຸນີນັ້ນໄດ້ບອກເຣື້ອງນີ້ໃຫ້ພິກສຸນີທັງຫລາຍຊາບບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລະນັນທາອັນພິກສຸນີຂໍຮ້ອງຢູ່ວ່າ 'ແມ່ເຈົ້າໄປຣດມາຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌)ນີ້ດ້ວຍເຖີດ' ຮັບປາກແລ້ວແຕ່ບໍ່ຊ່ວຍຣະງັບ ບໍ່ຂວນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບລະ" ຄັນແລ້ວ ພິກສຸນີ
ເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**
ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາອັນພິກສຸນີຂໍຮ້ອງຢູ່ວ່າ 'ແມ່ເຈົ້າໄປຣດມາຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌)ນີ້ດ້ວຍເຖີດ' ຮັບປາກແລ້ວແຕ່ບໍ່ຊ່ວຍຣະງັບບໍ່ຂວນ

ຂວາຍໃຫ້ຜູ້ອື່ນຊ່ວຍຣະງັບ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາ ອັນ ພິກສຸນີຂໍຮ້ອງຢູ່ວ່າ 'ແມ່ເຈົ້າໄປຣດມາຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌)ນີ້ດ້ວຍເຖີດ' ຮັບປາກແລ້ວແຕ່ບໍ່ຊ່ວຍຣະງັບ ບໍ່ຂົນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໕] ກໍພິກສຸນີໃດອັນພິກສຸນີຂໍຮ້ອງຢູ່ວ່າ 'ແມ່ເຈົ້າໄປຣດມາຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌)ນີ້ດ້ວຍເຖີດ' ຮັບປາກແລ້ວ ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ ບໍ່ຊ່ວຍຣະງັບ ບໍ່ຂົນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໑໑໖] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ຄຳວ່າ ອັນພິກສຸນີ ຄື ພິກສຸນີຮູບອື່ນ

ທີ່ຊື່ວ່າ ອທິກຣນ໌(ບັນຫາຂອງສົງຂ໌) ໄດ້ແກ່ ອທິກຣນ໌(ບັນຫາຂອງສົງຂ໌) ໔ ຢ່າງ຺ ຄື (໑) ວິວາທາທິກຣນ໌ (໒) ອນຸວາທາທິກຣນ໌ (໓) ອາປັຕຕາທິກຣນ໌ (໔) ກິຈຈາທິກຣນ໌

ຄຳວ່າ ແມ່ເຈົ້າໄປຣດມາຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌)ນີ້ດ້ວຍເຖີດ ຄວາມວ່າ ເຊີນແມ່ເຈົ້າໄປຊ່ວຍວິນິຈສັຍຄະດີນີ້ດ້ວຍເຖີດ

ຄຳວ່າ ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ ຄື ເມື່ອບໍ່ມີອັນຕຣາຍ

ຄຳວ່າ ບໍ່ຊ່ວຍຣະງັບ ຄື ບໍ່ຣະງັບດ້ວຍຕົນເອງ

ຄຳວ່າ ບໍ່ຂົນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບ ຄື ບໍ່ສັ່ງຜູ້ອື່ນ ເມື່ອທອດທຸຣະວ່າ "ເຮົາຈັກບໍ່ຣະງັບ ຈັກບໍ່ຂົນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບ" ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**
໑ ອທິກຣນ໌(ບັນຫາຂອງສົງຂ໌) ໔ ຢ່າງ ຄື
໑. ວິວາທາທິກຣນ໌ ໄດ້ແກ່ ການຖຽງກັນວ່າ ນີ້ເປັນທັມວິນັຍ ນີ້ບໍ່ແມ່ນທັມວິນັຍເປັນຕົ້ນ ໒. ອນຸວາທາທິກຣນ໌ ໄດ້ແກ່ ການໂຈທກັນດ້ວຍສີລວິບັຕິ ອາຈາຣວິບັຕິ ທິຕຖິວິບັຕິ ຫລືອາຊີວວິບັຕິ ໓. ອາປັຕຕາທິກຣນ໌ ໄດ້ແກ່ ການຕ້ອງອາບັຕິ ການປັບອາບັຕິແລະແກ້ຕ່າງໆໃຫ້ພົ້ນອາບັຕິ ໔. ກິຈຈາທິກຣນ໌ ໄດ້ແກ່ ກິຈທຸຣະຂອງສົງຂ໌ ເຊັ່ນ ອປໂລກນກັມ ຍັຕຕິກັມ ຍັຕຕິທຸຕິຍກັມ ຍັຕຕິຈຕຸຕຖກັມ ມີການສູວດປາຕິໂມກຂ໌ເປັນຕົ້ນ (ດູ ວິ. ປ. ໘/໓໔໘-໔໙໑/໔໔໔-໔໔໕)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໕ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**
[໙໙໗] ອຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ບໍ່ຊ່ວຍຣະງັບ ບໍ່ຂີນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌) ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ພິກສຸນີບໍ່ແນ່ໃຈ ບໍ່ຊ່ວຍຣະງັບ ບໍ່ຂີນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌) ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ບໍ່ຊ່ວຍຣະງັບ ບໍ່ຂີນຂວາຍໃຫ້ຜູ້ອື່ນຊ່ວຍຣະງັບອທິກຣນ໌(ບັນຫາຂອງສົງຂ໌) ຕ້ອງອາບັຕິປາຈິຕຕີຍ໌

**ທຸກກະຕະ**
ພິກສຸນີບໍ່ຊ່ວຍຣະງັບ ບໍ່ຂີນຂວາຍເພື່ອການຣະງັບອທິກຣນ໌(ບັນຫາຂອງສົງຂ໌)ຂອງອນຸປສັມບັນຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີບໍ່ແນ່ໃຈ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕ່ໍໄປນີ້ບໍ່ຕ້ອງອາບັຕິ ຄື

[໙໙໗] ໑. ພິກສຸນີບໍ່ຣະງັບໃນເມື່ອມີອັນຕຣາຍ

໒. ພິກສຸນີແສວງຫາ(ຄນະຜູ້ວິນິຈສັຍອທິກຣນ໌(ບັນຫາຂອງສົງຂ໌))ບໍ່ໄດ້

໓. ພິກສຸນີຜູ້ເປັນໄຂ້

໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໕. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໖ ນິທານວັຕຖຸ

**໕. ຈິຕຕາຄາຣວັຄ**

**ສິກຂາບົດທີ ໖**

ວ່າດ້ວຍການໃຫ້ຂອງຄັງອຂອງສົງແກ່ນັກຟ້ອນເປັນຕົ້ນ

**ເຣື່ອງພິກສຸນີຖຸລລະນັນທາ**

[໙໙໘] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາໃຫ້ຂອງຄັງອຂອງສົງດ້ວຍມືຕົນແກ່ພວກຄຣູນັກຟ້ອນແດ່ ພວກນັກຟ້ອນແດ່ ພວກໂຕນໄມ້ຄ້ຳແດ່ ພວກມາຍາກົລແດ່ ພວກຕີກອງແດ່ ກ່າວວ່າ "ພວກທ່ານຈົ່ງກ່າວພັນນາຄຸນຂອງຂະນ້ອຍໃນທີ່ຊຸມນຸມຊົນ" ພວກຄຣູນັກຟ້ອນແດ່ ພວກນັກຟ້ອນແດ່ ພວກໂຕນໄມ້ຄ້ຳແດ່ ພວກມາຍາກົລແດ່ ພວກຕີກອງແດ່ ຕ່າງພາກັນກ່າວພັນນາຄຸນຂອງພິກສຸນີຖຸລລະນັນທາໃນຊຸມນຸມຊົນວ່າ "ພິກສຸນີຖຸລລະນັນທາເປັນພຫູສູຕ ເປັນນັກເວົ້າ ເກັ່ງກ້າ ສາມາດກ່າວທັມມີກຖາ ພວກທ່ານຈົ່ງຖວາຍ ຈົ່ງກະທຳ(ສັກກາຣະ)ແກ່ທ່ານ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລະນັນທາຈຶ່ງໃຫ້ຂອງຄັງອ

ຂອງສັນດ້ວຍມືຕົນແກ່ຊາວບ້ານລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາໃຫ້ຂອງຄ້ຽວຂອງສັນດ້ວຍມືຕົນແກ່ຊາວບ້ານ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງໃຫ້ຂອງຄ້ຽວຂອງສັນດ້ວຍມືຕົນແກ່ຊາວບ້ານລະ ພິກສຸທັງຫລາຍ ການກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໖ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໐໐໐] ກໍພິກສຸນີໃດໃຫ້ຂອງຄ້ຽວຫລືຂອງສັນດ້ວຍມືຕົນແກ່ຊາວບ້ານ ແກ່ປຣິພາຊົກ ຫລືແກ່ປຣິພາຊິກາ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໑໐໐໑] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຊາວບ້ານ ໄດ້ແກ່ ບຸຄຄົລຜູ້ໃດຜູ້ນຶ່ງທີ່ຢູ່ຄອງເຮືອນ

ທີ່ຊື່ວ່າ ປຣິພາຊົກ ໄດ້ແກ່ ນັກບວຊຊາຍຄົນໃດຄົນນຶ່ງຜູ້ຢູ່ໃນລັທທິປຣິພາຊົກ ຍົກເວັ້ນພິກສຸແລະ

ສູານເບູຣ
ທີ່ຊື່ວ່າ ປຣິພາຊິກາ ໄດ້ແກ່ ນັກບວຊຍິງຄົນໃດຄົນນຶ່ງຜູ້ຢູ່ໃນລັທຫຼືປຣິພາຊິກາ ຍົກເວັ້ນພິກສູນີ ສິກຂມານາ ແລະສູານເບູຣີ
ທີ່ຊື່ວ່າ ຂອງຄ້ຽວ ໄດ້ແກ່ ເວັ້ນໂພຊນະ ໕ ນ້ຳແລະໄມ້ສີຟັນ ທີ່ເຫລືອຊື່ວ່າ ຂອງຄ້ຽວ
ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊນະ ໕ ຢ່າງ ຄື ເຂົ້າສຸກ ຂນົມສູດ ເຂົ້າຕູ ປາ ຊີ້ນ
ຄຳວ່າ ໃຫ້ ຄື ໃຫ້ດ້ວຍກາຍ ດ້ວຍຂອງເນື່ອງດ້ວຍກາຍ ຫລືດ້ວຍກາຣໂຍນໃຫ້ ຕ້ອງອາບັຕິ ປາຈິຕຕິຍ໌ ໃຫ້ນ້ຳແລະໄມ້ສີຟັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສູນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໐໐໔] ໑. ພິກສູນີໃຊ້ໃຫ້ຜູ້ອື່ນໃຫ້
໒. ພິກສູນີບໍ່ໄດ້ໃຫ້ເອງ
໓. ພິກສູນີໃຫ້ໂດຍວາງໄວ້ໃກ້ໆ
໔. ພິກສູນີໃຫ້ຂອງໄລ້ທາພາຍນອກ
໕. ພິກສູນີວິກົລຈິຕ
໖. ພິກສູນີຕົ້ນບັນຍັດ

ສິກຂາບົດທີ ໖ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໗ ນິທານວັຕຖຸ**

**໕. ຈິຕຕາຄາຣວັຄ**

**ສິກຂາບົດທີ ໗**

ວ່າດ້ວຍກາຣໃຊ້ຜ້າຊັບຣະດູແລ້ວບໍ່ສູລະ

**ເຣື້ອງພິກສູນີຖຸລລະນັນທາ**

[໑໐໐໕] ສູມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖ

ບິນຫຼິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາໃຊ້ຜ້າຊັບຣະດູຄົນດຽວບໍ່ຍອມສະລະ ພິກສຸນີອື່ນທີ່ມີປະຈຳເດືອນບໍ່ມີໂອກາສໄດ້ໃຊ້ ພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງໃຊ້ຜ້າຊັບຣະດູບໍ່ຍອມສະລະລະ" ຄັນແລ້ວ ພິກສຸນີ ເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລ ພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາໃຊ້ຜ້າຊັບຣະດູບໍ່ຍອມສະລະ ແມ່ນ ແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະ ເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງໃຊ້ຜ້າຊັບຣະດູບໍ່ຍອມສະລະ ລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລື ເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໐໔] ກໍພິກສຸນີໃດໃຊ້ຜ້າຊັບຣະດູແລ້ວບໍ່ຍອມສະລະ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຖຸລລະນັນທາ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໗ ອນາປັຕຕິ ວາຣ**

**ສິກຂາບົທວິພັງຄ໌**

[໑໐໐໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຜ້າຊັບຣະດູ ໄດ້ແກ່ ຜ້າທີ່ເຂົາຖວາຍໄວ້ໃຫ້ພິກສຸນີຜູ້ມີປະຈຳເດືອນໃຊ້
ຄຳວ່າ ບໍ່ຍອມສລະ ຄື ໃຊ້ ໑-໓ ຄືນແລ້ວ ຊັກໃນວັນທີ ໔ ຍັງໃຊ້ອີກ ບໍ່ຍອມສລະໃຫ້ແກ່
ພິກສຸນີ ສິກຂມານາ ຫລືສາມເນຣີຮູບອື່ນ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໐໖] ຜ້າທີ່ຍັງບໍ່ສລະ ພິກສຸນີສຳຄັນວ່າຍັງບໍ່ສລະ ໃຊ້ ຕ້ອງອາບັຕິປາຈິຕຕີຍ໌
ຜ້າທີ່ຍັງບໍ່ສລະ ພິກສຸນີບໍ່ແນ່ໃຈ ໃຊ້ ຕ້ອງອາບັຕິປາຈິຕຕີຍ໌
ຜ້າທີ່ຍັງບໍ່ສລະ ພິກສຸນີສຳຄັນວ່າສລະແລ້ວ ໃຊ້ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກຸກກະຕະ**

ຜ້າທີ່ສລະແລ້ວ ພິກສຸນີສຳຄັນວ່າຍັງບໍ່ສລະ ໃຊ້ ຕ້ອງອາບັຕິທຸກກະຕະ
ຜ້າທີ່ສລະແລ້ວ ພິກສຸນີສົງສັຍ ໃຊ້ ຕ້ອງອາບັຕິທຸກກະຕະ
ຜ້າທີ່ສລະແລ້ວ ພິກສຸນີສຳຄັນວ່າສລະແລ້ວ ໃຊ້ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໐໐໗] ໑. ພິກສຸນີໃຊ້ສອຍແລ້ວສລະ
໒. ພິກສຸນີໃຊ້ຜ້າທີ່ສລະແລ້ວອີກ
໓. ພິກສຸນີໃຊ້ສອຍໃນເມື່ອບໍ່ມີພິກສຸນີອື່ນຜູ້ມີປະຈຳເດືອນ
໔. ພິກສຸນີຖືກແຍ່ງຊີງຜ້າເອົາໄປ
໕. ພິກສຸນີຜ້າຫາຍ
໖. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໗. ພິກສຸນີວິກົລຈິຕ
໘. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນ຺ຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໗ ນິທານວັຕຖຸ

### ໕. ຈິຕຕາຄາຣວັຄ

**ສິກຂາບົດທີ ໗**

ວ່າດ້ວຍການບໍ່ສລະທີ່ພັກ

**ເຣື່ອງພິກສຸນີຖຸລລະນັນທາ**

[໑໐໐໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນ຺ຫິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາບໍ່ສລະທີ່ພັກແລ້ວຫລີກຈາຣິກໄປ ຕໍ່ມາທີ່ພັກນັ້ນຖືກໄຟໄຫມ້ ພິກສຸນີທັງຫລາຍກ່າວຢ່າງນີ້ວ່າ "ແມ່ເຈົ້າ ພວກເຮົາຈົ່ງຊ່ອຍກັນຂົນຂອງອອກມາ" ພິກສຸນີບາງພວກກ່າວຢ່າງນີ້ວ່າ "ແມ່ເຈົ້າ ພວກຂະນ້ອຍບໍ່ຂົນຂອງອອກມາ ສິ່ງໃດສິ່ງນຶ່ງສູນຫາຍໄປ ແມ່ເຈົ້າຈັກທວງພວກຂະນ້ອຍ" ເມື່ອພິກສຸນີຖຸລລະນັນທາກັບມາສູ່ທີ່ພັກນັ້ນອີກ ຖາມພິກສຸນີທັງຫລາຍວ່າ "ແມ່ເຈົ້າ ພວກທ່ານຊ່ອຍຂົນຂອງອອກແດ່ຫລືບໍ່" ພິກສຸນີຕອບວ່າ "ແມ່ເຈົ້າ ພວກຂະນ້ອຍບໍ່ໄດ້ຊ່ອຍຂົນ" ພິກສຸນີຖຸລລະນັນທາຕຳຫນິ ປະນາມ ໂພນທະນາວ່າ "ຈົ່ງໃດພວກພິກສຸນີ ເມື່ອທີ່ພັກຖືກໄຟໄຫມ້ ຈຶ່ງບໍ່ຊ່ອຍກັນຂົນຂອງອອກມາລະ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈົ່ງໃດແມ່ເຈົ້າຖຸລລະນັນທາ ບໍ່ສລະທີ່ພັກແລ້ວຫລີກຈາຣິກໄປລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາບໍ່ສລະທີ່ພັກແລ້ວຫລີກຈາຣິກໄປແມ່ນແທ້ບໍ" ພິກສຸທັງຫລາຍທູລຣັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈົ່ງໃດພິກສຸນີຖຸລລະນັນທາບໍ່ສລະທີ່ພັກແລ້ວຫລີກຈາຣິກໄປລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຣັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໐໙] ກໍພິກສຸນີໃດບໍ່ສູລະທີ່ພັກແລ້ວຫລີກຈາຣິກໄປ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໑໐໑໐] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ທີ່ພັກ ພຣະຜູ້ມີພຣະພາກຕຣັສຫມາຍເຖິງທີ່ພັກທີ່ຕິດບານປະຕູ

ຄໍາວ່າ ບໍ່ສູລະ . . . ຫລີກຈາຣິກໄປ ຄວາມວ່າ ບໍ່ສູລະແກ່ພິກສຸນີ ສິກຂມານາຫລືສາມເນຣີ ເມື່ອຍ່າງພົ້ນເຂຕທີ່ພັກມີຮົ້ວລ້ອມ ຕ້ອງອາບັຕິປາຈິຕຕີຍ໌ ຍ່າງພົ້ນບໍຣິເວນທີ່ພັກທີ່ບໍ່ມີຮົ້ວລ້ອມ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໑໑] ທີ່ພັກທີ່ຍັງບໍ່ສູລະ ພິກສຸນີສໍາຄັນວ່າຍັງບໍ່ໄດ້ສູລະ ຫລີກໄປ ຕ້ອງອາບັຕິປາຈິຕຕີຍ໌

ທີ່ພັກທີ່ຍັງບໍ່ສູລະ ພິກສຸນີບໍ່ແນ່ໃຈ ຫລີກໄປ ຕ້ອງອາບັຕິປາຈິຕຕີຍ໌

ທີ່ພັກທີ່ຍັງບໍ່ສູລະ ພິກສຸນີສໍາຄັນວ່າສູລະແລ້ວ ຫລີກໄປ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໕. ຈິຕຕາຄາຣວັຄ ສິກຂາບົດທີ ໗ ອນາປັຕຕິວາຣ**

**ຕິກທຸກກະຕະ**

ພິກສຸນີບໍ່ສູລະຫ້ອງພັກບໍ່ໄດ້ຕິດປະຕູ ຫລີກໄປ ຕ້ອງອາບັຕິທຸກກະຕະ

ທີ່ພັກທີ່ສູລະແລ້ວ ພິກສຸນີສໍາຄັນວ່າຍັງບໍ່ສູລະ ຫລີກໄປ ຕ້ອງອາບັຕິທຸກກະຕະ

ທີ່ພັກທີ່ສູລະແລ້ວ ພິກສຸນີບໍ່ແນ່ໃຈ ຫລີກໄປ ຕ້ອງອາບັຕິທຸກກະຕະ
ທີ່ພັກທີ່ສູລະແລ້ວ ພິກສຸນີສຳຄັນວ່າສູລະແລ້ວ ຫລີກໄປ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໑໔] ໑. ພິກສຸນີສູລະແລ້ວຫລີກໄປ

໒. ພິກສຸນີຫລີກໄປເມື່ອມີອັນຕຣາຍ

໓. ພິກສຸນີແສວງຫາ(ຜູ້ເບິ່ງແຍງແທນ)ແລ້ວບໍ່ໄດ້

໔. ພິກສຸນີຜູ້ເປັນໄຂ້

໕. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໖. ພິກສຸນີວິກົລຈິຕ

໗. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໘ ນິທານວັຕຖຸ**

**໕. ຈິຕຕາຄາຣວັຄ**

**ສິກຂາບົດທີ ໘**

ວ່າດ້ວຍການຮຽນເດັຽຣະສານວິຊາ

**ເຣື້ອງພິກສຸນີສັພພັຄຄີຍ໌**

[໑໐໑໕] ສູມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ຮຽນເດັຽຣະສານວິຊາ໑ ຊາວບ້ານຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງຮຽນເດັຽຣະສານວິຊາເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງຮຽນ

ເດັຽຣະສານວິຊາລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ຣຽນ

**ໝາຍເຫດ :**

໑ ໃນວິນັຍປິດົກນີ້ ເດັຽຣະສານວິຊາ ຄືວິຊາທີ່ບໍ່ມີປໂຍດ ບໍ່ກ່ຽວຂ້ອງກັບພຣະພຸທທສາສນາ ເປັນວິຊາທີ່ບຽດບຽນຜູ້ອື່ນ ເຊັ່ນ (໑) ວິຊາຝຶກຊ້າງ, ຂີ່ຊ້າງ (໒) ວິຊາຝຶກມ້າ, ຂີ່ມ້າ (໓) ວິຊາການຂັບຣຖ (໔) ວິຊາຍິງທນູ (໕) ວິຊາຟັນດາບ (໖) ຣ່າຍມນຕຣ໌ທຳຮ້າຍຜູ້ອື່ນດ້ວຍພິທີອາຖຣຣພນ໌ (໗) ຣ່າຍມນຕຣ໌ເສກຕະປູຝັງດິນຂ້າຄົນຫລືເສກເຂົ້າທ້ອງ (໘) ຣ່າຍມນຕຣ໌ທຳຜູ້ອື່ນໃຫ້ຢູ່ໃນອຳນາຈຫລືໃຫ້ເປັນບ້າ (໙) ຣ່າຍມນຕຣ໌ທຳຜູ້ອື່ນໃຫ້ເນື້ອເລືອດເຫືອດແຫ້ງ (໑໐) ປ່ອຍສັຕວ໌ມີພິສ (ວິ. ອ. ໔/໑໐໑໕/໕໑໑, ກັງຂາ. ອ. ໓໘໘, ສາຣັຕຖທີກາ ໓/໑໐໑໕/໑໕໕, ກັງຂາ. ຕີກາ ໕໐໓, ປາຈິຕິຍາທິໂຍຊນາ ໑໗໓ ມ. ) ສ່ວນໃນພຣະສູຕຣ ຫມາຍເຖິງການທຳນາຍອວັຍວະ ທຳນາຍຕຳຫນິ ທຳນາຍໂຊຄລາງ ທຳນາຍຝັນ ທຳນາຍລັກສນະ ທຳນາຍຫນູກັດຜ້າ ທຳພິທີບູຊາໄຟ ພິທີເບີກແວ່ນວຽນເທັຍນ ພິທີຊັດແກລບບູຊາໄຟ ພິທີຊັດຣຳບູຊາໄຟພິທີຊັດເຂົ້າສານບູຊາໄຟ ພິທີຕື່ມເຕີມເນີຍບູຊາໄຟ ພິທີຕື່ມເຕີມນ້ຳມັນບູຊາໄຟ ພິທີພົ່ນເຄື່ອງເຊັ່ນບູຊາໄຟ ຯລຯ (ພຣະສູຕຕັນຕປິດົກແປລ ທີ. ສີ. ໙/໒໑-໒໗/໘-໑໐)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໙ ອນາປັຕຕິວາຣ

ເດັຽຣະສານວິຊາ ແມ່ນແທ້ບໍ” ພິກສຸທັງຫລາຍທູລຮັບວ່າ “ແມ່ນແທ້ພຣະພຸດທະເຈົ້າຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ “ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງຣຽນເດັຽຣະສານວິຊາລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້

ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໑໔] ກໍພິກສຸນີໃດຮຽນເດັຽຣະສານວິຊາ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີສັພພັຄຄີຍ໌ ຈົບ

**ສິກຂາບົທວິພັງຄ໌**

[໑໐໑໕] ຄໍາວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ເດັຽຣະສານວິຊາ ຫມາຍເຖິງ ສິລປວິທຍາຢ່າງໃດຢ່າງນຶ່ງພາຍນອກພຣະສາສນາທີ່ບໍ່ມີປໂຍດ

ຄໍາວ່າ ຮຽນ ຄື ຮຽນເປັນບົທ ຕ້ອງອາບັຕິປາຈິຕຕີຍ໌ທຸກໆບົທ ຮຽນເປັນອັກສຣ ຕ້ອງອາບັຕິປາຈິຕຕີຍ໌ທຸກໆຕົວອັກສຣ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໑໖] ໑. ພິກສຸນີຮຽນວິຊາຂຽນຫນັງສື

໒. ພິກສຸນີຮຽນທ່ອງຈໍາ

໓. ພິກສຸນີຮຽນພຣະປຣິຕຣເພື່ອຄຸ້ມຄອງຕົນ໑

໔. ພິກສຸນີວິກລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ໝາຍເຫດ :**

໑ ຄືທ່ອງມນຕ໌ປ້ອງກັນຍັກສ໌ ທ່ອງມນຕ໌ກະບໍຣິເວນກັນບໍ່ໃຫ້ງູເຂົ້າມາ (ວິ. ອ. ໔/໑໐໑໘/໕໑໑)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໑໐ ພຣະບັນຍັດ**

**໕. ຈິຕຕາຄາຣວັຄ**

**ສິກຂາບົດທີ ໑໐**

ວ່າດ້ວຍການສອນເດັຽຣະສານວິຊາ

**ເຣື້ອງພິກສຸນີສັພພັຄຄີຍ໌**

[໑໐໑໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ສອນເດັຽຣະສານວິຊາ ຊາວບ້ານຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງສອນເດັຽຣະສານວິຊາເໝືອນຍິງຄຣີຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ ຈຶ່ງສອນເດັຽຣະສານວິຊາລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ສອນເດັຽຣະສານວິຊາ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງສອນເດັຽຣະສານວິຊາລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໑໗] ກໍພິກສຸນີໃດສອນເດັຽຣະສານວິຊາ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີສັພພັຄຄີຍ໌ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ຈິຕຕາຄາວັຄ ສິກຂາບົດທີ ໑໐ ອນາປັຕຕິວາຣ

### ສິກຂາບົທວິພັງຄ໌

[໑໐໑໘] ຄຳວ່າ ກໍ.. . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ.. . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ເດັຽຣະສານວິຊາ ຫມາຍເຖິງ ສິລປວິທຍາຢ່າງໃດຢ່າງນຶ່ງນອກພຣະສາສນາທີ່ບໍ່ມີປໂຍດ ຄຳວ່າ ສອນ ຄື ສອນເປັນບົທ ຕ້ອງອາບັຕິປາຈິຕຕີຍ໌ທຸກໆບົທ ສອນເປັນອັກສຣ ຕ້ອງອາບັຕິປາຈິຕຕີຍ໌ທຸກໆຕົວອັກສຣ

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໑໙] ໑. ພິກສຸນີສອນວິຊາຂຽນຫນັງສື

໒. ພິກສຸນີສອນກາຣທ່ອງຈຳ

໓. ພິກສຸນີສອນພຣະປຣິຕຣເພື່ອຄຸ້ມຄອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ

ຈິຕຕາຄາຣວັຄທີ ໕ ຈົບ

**ໝາຍເຫດ :**

໑ ກາຣທ່ອງຈຳ ຄືສາສູຕຣ໌ວ່າດ້ວຍກາຣຊົງຈຳ ຊຶ່ງເມື່ອປະຕິບັດຕາມທີ່ກ່າວໄວ້ ຈະຊົງຈຳຄັມພີຣ໌ໄດ້ມາກມາຍ (ກງ໌ຂາ. ຕີກາ ໕໐໓)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ຝ. ອາຣາມວັຄ ສິກຂາບົດທີ ໑ ນິທານວັຕຖຸ**

**ຝ. ອາຣາມວັຄ**

ໝວດວ່າດ້ວຍອາຣາມ

**ສິກຂາບົດທີ ໑**

ວ່າດ້ວຍກາຣເຂົ້າອາຣາມ ໂດຍບໍ່ບອກ

**ເຣື້ອງພິກສຸນີຫລາຍຮູບ**

[໑໐໘໑] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸຫລາຍຮູບມີຈີວອນຜືນດຽວກຳລັງຕັດຍິບຈີວອນຢູ່ໃນອາວາສໃກ້ໝູ່ບ້ານ ພິກສຸນີທັງຫລາຍເຂົ້າໄປສູ່ອາຣາມ ໂດຍບໍ່ບອກເຂົ້າໄປຫາພິກສຸເຫລົ່ານັ້ນເຖິງທີ່ຢູ່ ພິກສຸທັງຫລາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງເຂົ້າມາສູ່ອາຣາມໂດຍບໍ່ບອກລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົດ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີເຂົ້າໄປສູ່ອາຣາມໂດຍບໍ່ບອກ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງເຂົ້າໄປສູ່ອາຣາມໂດຍບໍ່ບອກລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

ກໍພິກສຸນີໃດເຂົ້າໄປສູ່ອາຣາມໂດຍບໍ່ບອກ ຕ້ອງອາບັດປາຈິຕຕີຍ໌
ສິກຂາບົທນີ້ພຣະຜູ້ມີພຣະພາກຊົງບັນຍັດໄວ້ແກ່ພິກສຸນີທັງຫລາຍຢ່າງນີ້

ເຣື້ອງພິກສຸນີຫລາຍຮູບ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ຝ. ອາຣາມວັຄ ສິກຂາບົດທີ ໑ ພຣະອນຸບັນຍັດ**

**ເຣື້ອງພິກສຸນີບໍ່ກອາດອາຣາມ**

[໑໐໔໔] ສມັຍນັ້ນ ພິກສຸເຫລົ່ານັ້ນຫລີກໄປຈາກອາວາສນັ້ນ ພິກສຸນີທັງຫລາຍຄິດວ່າ“ພຣະຄຸນເຈົ້າທັງຫລາຍຈາກໄປແລ້ວ” ຈຶ່ງບໍ່ໄປອາຣາມ ເມື່ອພິກສຸເຫລົ່ານັ້ນກັບມາສູ່ອາວາສນັ້ນອີກ ພິກສຸນີທັງຫລາຍຮູ້ວ່າ “ພຣະຄຸນເຈົ້າທັງຫລາຍມາແລ້ວ” ບອກແລ້ວພາກັນເຂົ້າໄປຫາພິກສຸເຫລົ່ານັ້ນຂາບໄຫວ້ແລ້ວຢືນຢູ່ ນະທີ່ສົມຄວຣ ພິກສຸເຫລົ່ານັ້ນໄດ້ກ່າວກັບພິກສຸນີເຫລົ່ານັ້ນຜູ້ຢືນຢູ່ ນະທີ່ສົມຄວຣ ດັ່ງນີ້ວ່າ “ນ້ອງຍິງທັງຫລາຍ ເພາະເຫຕຸໃດ ພວກທ່ານຈຶ່ງບໍ່ກອາດອາຣາມ ບໍ່ຕັ້ງນ້ຳສັນນ້ຳໃຊ້ໄວ້ລະ” ພິກສຸນີເຫລົ່ານັ້ນຕອບວ່າ “ພຣະຜູ້ມີພຣະພາກຊົງບັນຍັດສິກຂາບົທໄວ້ວ່າ ‘ພິກສຸນີບໍ່ຄວນເຂົ້າອາຣາມ’ ດັ່ງນັ້ນ ພວກຂະນ້ອຍຈຶ່ງບໍ່ມາ” ພິກສຸເຫລົ່ານັ້ນໄດ້ຂາບທູລເຣື້ອງນັ້ນໃຫ້ພຣະຜູ້ມີພຣະພາກຊົງຊາບ ພຣະຜູ້ມີພຣະພາກຊົງອນຸຍາຕວ່າ “ພິກສຸທັງຫລາຍ ເຮົາອນຸຍາຕໃຫ້ບອກພິກສຸນີທີ່ມີຢູ່ແລ້ວເຂົ້າອາຣາມໄດ້” ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງ ດັ່ງນີ້

**ພຣະອນຸບັນຍັດ**

ອີກຢ່າງນຶ່ງ ພິກສຸນີໃດເຂົ້າໄປສູ່ອາຣາມໂດຍບໍ່ບອກພິກສຸທີ່ມີຢູ່ ຕ້ອງອາບັດປາຈິຕຕີຍ໌

ເຣື້ອງພິກສຸນີບໍ່ກອາດອາຣາມ ຈົບ

[໑໐໔໕] ສມັຍນັ້ນ ພິກສຸເຫລົ່ານັ້ນຫລີກໄປຈາກອາວາສນັ້ນແລ້ວກັບມາສູ່ອາວາສນັ້ນອີກ ພິກສຸນີທັງຫລາຍຄິດວ່າ “ພຣະຄຸນເຈົ້າທັງຫລາຍຈາກໄປແລ້ວ” ຈຶ່ງບໍ່ບອກ ເຂົ້າໄປສູ່ອາຣາມ ພວກທ່ານ

ໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກຊົງບັນຍັດສິກຂາບົທໄວ້ວ່າ 'ພິກສຸນີບໍ່ບອກພິກສຸທີ່ມີຢູ່ບໍ່ຄວນເຂົ້າອາຣາມ ' ພວກເຮົາບໍ່ໄດ້ບອກພິກສຸທີ່ມີຢູ່ເຂົ້າອາຣາມຕ້ອງອາບັຕິປາຈິຕຕີຍ໌ແລ້ວແລ້ວຫືບໍ່" ພິກສຸທັງຫລາຍໄດ້ຂາບທູລເຣື່ອງນັ້ນໃຫ້ພຣະຜູ້ມີພຣະພາກຊົງຊາບ ລຳດັບນັ້ນ ພຣະຜູ້ມີພຣະພາກຊົງສະແດງທັມມີກຖາເພາະເຣື່ອງນີ້ເປັນຕົ້ນເຫຕຸ ແລ້ວຮັບສັ່ງກັບພິກສຸທັງຫລາຍວ່າ ຯລຯ ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໖. ອາຣາມວັຄ ສິກຂາບົດທີ ໑ ບົທພາຊນີຍ໌**

**ພຣະອນຸບັນຍັດ**

[໑໐໘໔] ອີກຢ່າງນຶ່ງ ພິກສຸນີໃດຮູ້ຢູ່ ເຂົ້າໄປສູ່ອາຣາມທີ່ມີພິກສຸໂດຍບໍ່ບອກ ຕ້ອງອາບັຕິປາຈິຕຕີຍ໌

**ສິກຂາບົທວິພັງຄ໌**

[໑໐໘໕] ຄຳວ່າ ອີກຢ່າງນຶ່ງ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ອີກຢ່າງນຶ່ງ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາຄຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຮູ້ຢູ່ ຄື ພິກສຸນີຮູ້ເອງ ຄົນເຫລົ່າອື່ນບອກທ່ານ ຫລືພິກສຸເຫລົ່ານັ້ນບອກອາຣາມທີ່ຊື່ວ່າ ມີພິກສຸ ຄື ສະຖານທີ່ມີພິກສຸອາສັຍຢູ່ແມ່ນທີ່ໂຄນຕົ້ນໄມ້

ຄຳວ່າ ເຂົ້າໄປສູ່ອາຣາມໂດຍບໍ່ບອກ ຄື ບໍ່ບອກກ່າວພິກສຸ ສາມເນຣ ຫລືຄົນວັດ ເມື່ອລ່ວງເຂຕອາຣາມທີ່ມີຮົ້ວລ້ອມ ຕ້ອງອາບັຕິປາຈິຕຕີຍ໌ ເມື່ອລ່ວງສູ່ອຸປຈາຣແຫ່ງອາຣາມທີ່ມີຮົ້ວລ້ອມ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

[໑໐໘໖] ອາຣາມທີ່ມີພິກສຸ ພິກສຸນີສຳຄັນວ່າມີພິກສຸ ເຂົ້າໄປສູ່ອາຣາມໂດຍບໍ່ບອກພິກສຸທີ່ມີຢູ່ຕ້ອງອາບັຕິປາຈິຕຕີຍ໌

ອາຣາມທີ່ມີພິກສຸ ພິກສຸນີບໍ່ແນ່ໃຈ ເຂົ້າໄປສູ່ອາຣາມໂດຍບໍ່ບອກພິກສຸທີ່ມີຢູ່ ຕ້ອງອາບັຕິທຸກກະຕະ

ອາຣາມທີ່ມີພິກສຸ ພິກສຸນີສຳຄັນວ່າບໍ່ມີພິກສຸ ເຂົ້າໄປສູ່ອາຣາມໂດຍບໍ່ບອກພິກສຸທີ່ມີຢູ່ ບໍ່ຕ້ອງອາບັຕິ

ອາຮາມທີ່ບໍ່ມີພິກສຸ ພິກສຸນີສຳຄັນວ່າມີພິກສຸ ເຂົ້າໄປສູ່ອາຮາມໂດຍບໍ່ບອກພິກສຸທີ່ມີຢູ່ ຕ້ອງອາບັຕິທຸກກະຕະ

ອາຮາມທີ່ບໍ່ມີພິກສຸ ພິກສຸນີບໍ່ແນ່ໃຈ ເຂົ້າໄປສູ່ອາຮາມໂດຍບໍ່ບອກພິກສຸທີ່ມີຢູ່ ຕ້ອງອາບັຕິທຸກກະຕະ

ອາຮາມທີ່ບໍ່ມີພິກສຸ ພິກສຸນີສຳຄັນວ່າບໍ່ມີພິກສຸ ເຂົ້າໄປສູ່ອາຮາມໂດຍບໍ່ບອກພິກສຸທີ່ມີຢູ່ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໔໗] ໑. ພິກສຸນີເຂົ້າໄປໂດຍບອກພິກສຸທີ່ມີຢູ່

໒. ພິກສຸບໍ່ມີຢູ່ ພິກສຸນີຈຶ່ງເຂົ້າໄປໂດຍບໍ່ບອກ

໓. ພິກສຸນີເຂົ້າໄປຍ່າງເບິ່ງສີສະພິກສຸນີຜູ້ເຂົ້າໄປກ່ອນ

໔. ພິກສຸນີໄປ ນະ ສະຖານທີ່ມີພິກສຸນີກຳລັງປະຊຸມກັນ

໕. ພິກສຸນີຍ່າງຕາມທາງທີ່ຜ່ານໄປອາຮາມ

໖. ພິກສຸນີຜູ້ເປັນໄຂ້

໗. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໘. ພິກສຸນີວິກົລຈິຕ

໙. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໖. ອາຮາມວັຄ ສິກຂາບົດທີ ໒ ນິທານວັຕຖຸ**

**໖. ອາຮາມວັຄ**

**ສິກຂາບົດທີ ໒**

ວ່າດ້ວຍການດ່າບໍຣິພາສພິກສຸ

**ເລື້ອງພຣະກັປປິຕກະ**

[໑໐໔໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ກູຕາຄາຣສາລາປ່າມຫາວັນ ເຂຕກຸງເວສາລີ ຄັ້ງນັ້ນ ທ່ານພຣະກັປປິຕກະຜູ້ເປັນອຸປັຊຊາຍ໌ຂອງທ່ານພຣະອຸບາລີພັກຢູ່ໃນປ່າຊ້າ ຄາວນັ້ນມີພິກສຸນີຮູບນຶ່ງອາຍຸຫລາຍກວ່າພວກພິກສຸນີສັພພັຄຄີຍ໌ມໍຣະນະພາພ ພວກພິກສຸນີສັພພັຄຄີຍ໌ຊ່ວຍກັນນໍາ(ສົພ)ພິກສຸນີນັ້ນອອກໄປເຜົາ ແລ້ວກໍ່ສະຖູປໄວ້ບໍ່ໄກທີ່ພັກຂອງພຣະກັປປິຕກະ ແລ້ວສະຖູປທີ່ສະຖູປນັ້ນ ລໍາດັບນັ້ນ ທ່ານພຣະກັປປິຕກະຣໍາຄານສຽງນັ້ນ ຈຶ່ງທໍາລາຍສະຖູປນັ້ນເສັຽແຫລກລະອຽດ ພວກພິກສຸນີສັພພັຄຄີຍ໌ປຶກສາກັນວ່າ “ພຣະກັປປິຕກະທໍາລາຍສະຖູປແມ່ເຈົ້າຂອງພວກເຮົາ ມາເຖີດພວກເຮົາຈະຂ້າພຣະກັປປິຕກະນັ້ນ” ພິກສຸນີຮູບນຶ່ງບອກຄວາມນັ້ນໃຫ້ທ່ານພຣະອຸບາລີຊາບ ທ່ານພຣະອຸບາລີນໍາເລື້ອງນັ້ນໄປບອກທ່ານພຣະກັປປິຕກະ ທ່ານພຣະກັປປິຕກະໜີອອກຈາກວິຫາຣໄປລີ້ຢູ່ ຄາວນັ້ນພວກພິກສຸນີສັພພັຄຄີຍ໌ເຂົ້າໄປທີ່ວິຫາຣຂອງທ່ານພຣະກັປປິຕກະຕັ້ງຢູ່ ຄັນແລ້ວຊ່ວຍກັນຂົນກ້ອນຫີນແລະກ້ອນດິນທັບວິຫາຣຂອງທ່ານ ແລ້ວຈາກໄປດ້ວຍເຂົ້າໃຈວ່າ “ພຣະກັປປິຕກະມໍຣະນະພາພແລ້ວ” ຄັນຣາຕຣີນັ້ນຜ່ານໄປ ທ່ານພຣະກັປປິຕກະຄອງອັນຕຣວາສົກ ຖືບາຕຣແລະຈີວອນເຂົ້າໄປບິນທະບາຕໃນກຸງເວສາລີແຕ່ເຊົ້າ ພວກພິກສຸນີສັພພັຄຄີຍ໌ເຫັນທ່ານຍ່າງທ່ຽວບິນທະບາຕຢູ່ ກ່າວກັນຢ່າງນີ້ວ່າ “ພຣະກັປປິຕກະຍັງມີຊີວິຕຢູ່ ໃຜກັນນະທີ່ນໍາແຜນການຂອງພວກເຮົາໄປບອກ” ຄັນໄດ້ຊາບວ່າ “ພຣະຄຸນເຈົ້າອຸບາລີນໍາແຜນການຂອງພວກເຮົາໄປບອກ” ຈຶ່ງພາກັນດ່າທ່ານພຣະອຸບາລີວ່າ “ທ່ານຜູ້ເປັນທາສຮັບໃຊ້ເມື່ອເວລາອາບນໍ້າ ຄອຍຖູຂີ້ໄຄລ ມີຕະກູນຕໍ່າຄົນນີ້ ຈັ່ງໃດຈຶ່ງນໍາແຜນການຂອງເຮົາໄປບອກລະ” ບັນດາພິກສຸນີຜູ້ມັກນ້ອຍ ฯລฯ ພາກັນຕໍາໜິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງດ່າພຣະຄຸນເຈົ້າອຸບາລີລະ” ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນໍາເລື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ພຣະວິນັຍປີດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ຝ. ອາຣາມວັຄ ສິກຂາບົດທີ ໔ ສິກຂາບົທວິພັງຄ໌**

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ດ່າອຸບາລີ ແມ່ນແທ້ບໍ” ພິກສຸທັງ

ຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ດ່າອຸບາລີລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໔ລ] ກໍພິກສຸນີໃດດ່າຫລືບໍຣິພາສພິກສຸ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພຣະກັປປິຕກະ ຈົບ

**ສິກຂາບົທວິພັງຄ໌**

[໑໐໓໐] ຄຳວ່າ ກໍ. . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ຄຳວ່າ ພິກສຸ ໄດ້ແກ່ ອຸປສົມບັນ

ຄຳວ່າ ດ່າ ຄື ດ່າດ້ວຍອັກໂກສວັຕຖຸ ໑໐ ຢ່າງ໑ ຕ້ອງອາບັຕິປາຈິຕຕີຍ໌

ຄຳວ່າ ບໍຣິພາສ ຄື ສະແດງອາການທີ່ໜ້າຢ້ານ ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**

໑ ອັກໂກສວັຕຖຸ ຄຳທີ່ໃຊ້ດ່າ ໑໐ ຢ່າງ ໃນວິນັຍທ່ານວ່າ ໄດ້ແກ່ ໂອມສວາທ ຄືຄຳກ່າວສຽດສີ ໑໐ ຢ່າງ (ວິ. ປ.

໗/໓໓໐/໔ລ໗, ວິ. ອ. ໓/໓໓໐/໔໗໓, ດູ ວິນັຍປິດົກແປລ ເຫລັ້ມ ໔ ຂໍ້ ໑໕ ໜ້າ ໔໐໔)

ສ່ວນໃນຫັມບົທອັນຖະກຖາ ໝາຍເຖິງຄຳທີ່ໃຊ້ດ່າ ໑໐ ຢ່າງ ຄືຄຳດ່າວ່າ (໑) ເຈົ້າເປັນໂຈຣ (໔) ເປັນຄົນພາລ (໓) ເປັນຄົນຫລົງ (໔) ເປັນອູຖ (໕) ເປັນໂຄ (໖) ເປັນລາ (໗) ເປັນສັຕວ໌ນະຣົກ (໗) ເປັນສັຕວ໌ເດັຽຣະສານ (ລ) ເປັນຄົນບໍ່ມີສຸຄຕິ (໑໐) ເປັນຄົນຫວັງໄດ້ສະເພາະທຸຄຕິ (ຂຸ. ທ. ອ. ໔/໑໕/໔໖)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ຝ. ອາຮາມວັຄ ສິກຂາບົດທີ ໔ ອນາປັຕຕິວາຣ

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໖໑] ອຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ດ່າຫລືບໍຣິພາສ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ພິກສຸນີບໍ່ແນ່ໃຈ ດ່າຫລືບໍຣິພາສ ຕ້ອງອາບັຕິປາຈິຕຕີຍ໌
ອຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ດ່າຫລືບໍຣິພາສ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກະຕະ**

ພິກສຸນີດ່າຫລືບໍຣິພາສອນຸປສັມບັນ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອຸປສັມບັນ ດ່າຫລືບໍຣິພາສ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີບໍ່ແນ່ໃຈ ດ່າຫລືບໍຣິພາສ ຕ້ອງອາບັຕິທຸກກະຕະ
ອນຸປສັມບັນ ພິກສຸນີສຳຄັນວ່າເປັນອນຸປສັມບັນ ດ່າຫລືບໍຣິພາສ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໐໖໔] ໑. ພິກສຸນີມຸ່ງອັນຖະ
໒. ພິກສຸນີມຸ່ງທັມ
໓. ພິກສຸນີມຸ່ງສັ່ງສອນ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ຝ. ອາຮາມວັຄ ສິກຂາບົດທີ ໓ ນິທານວັຕຖຸ

### ຝ. ອາຮາມວັຄ

### ສິກຂາບົດທີ ໖

ວ່າດ້ວຍການບໍຣິພາສຄນະ

### ເຣື້ອງພິກສຸນີຈັນທກາລີ

[໑໐໖໖] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຈັນທກາລີຊອບກໍ່ຄວາມບາດໝາງ ກໍ່ການຜິດຖຽງ ກໍ່ການວິວາທ ກໍ່ເຣື້ອງນອງນັນ ກໍ່ອທິກຣນ໌(ບັນຫາຂອງສົງຂ໌)ໃນສົງຂ໌ ເມື່ອສົງຂ໌ທຳກັມແກ່ຈັນທກາລີນັ້ນ ພິກສຸນີຖຸລລະນັນທາກໍຄັດຄ້ານ ຕໍ່ມາ ພິກສຸນີຖຸລລະນັນທາຍ່າງທາງໄປຍັງໝູ່ບ້ານດ້ວຍທຸຣະບາງຢ່າງ ພິກສຸນີສົງຂ໌ພໍຮູ້ວ່າ "ພິກສຸນີຖຸລລະນັນທາຈາກໄປແລ້ວ" ຈຶ່ງລົງອຸກເປຂນີຍກັມແກ່ພິກສຸນີຈັນທກາລີເພາະບໍ່ເຫັນອາບັຕິ ຄັນພິກສຸນີຖຸລລະນັນທາທຳທຸຣະນັ້ນໃນໝູ່ບ້ານເສັດແລ້ວກັບມາຍັງກຸງສາວັຕຖີ ເມື່ອພິກສຸນີຖຸລລະນັນທາກຳລັງມາ ພິກສຸນີຈັນທກາລີບໍ່ປູອາສນະ ບໍ່ຕັ້ງນ້ຳລ້າງຕີນ ຕັ່ງຮອງຕີນ ກະເບື້ອງເຊັດຕີນ ບໍ່ລຸກຮັບບາຕຣແລະຈີວອນ ບໍ່ເອົານ້ຳດື່ມຕ້ອນຮັບ ພິກສຸນີຖຸລລະນັນທາໄດ້ກ່າວກັບພິກສຸນີຈັນທກາລີນັ້ນດັ່ງນີ້ວ່າ "ເມື່ອເຮົາກຳລັງມາ ຈັ່ງໃດທ່ານບໍ່ປູອາສນະ ບໍ່ຕັ້ງນ້ຳລ້າງຕີນ ຕັ່ງຮອງຕີນ ກະເບື້ອງເຊັດຕີນ ບໍ່ລຸກຮັບບາຕຣແລະຈີວອນ ບໍ່ເອົານ້ຳດື່ມຕ້ອນຮັບລະ" ພິກສຸນີຈັນທກາລີຕອບວ່າ "ແມ່ເຈົ້າ ຄົນບໍ່ມີທີ່ເພິ່ງກໍເປັນຢ່າງນີ້ແຫລະ" ພິກສຸນີຖຸລລະນັນທາຖາມວ່າ "ເພາະເຫຕຸໃດທ່ານຈຶ່ງບໍ່ມີທີ່ເພິ່ງ" ພິກສຸນີຈັນທກາລີຕອບວ່າ "ແມ່ເຈົ້າ ພິກສຸນີເຫລົ່ານີ້ເຂົ້າໃຈວ່າ ຂະນ້ອຍບໍ່ມີທີ່ເພິ່ງ ບໍ່ມີຊື່ສຽງ ບໍ່ມີໃຜຄອຍກ່າວປົກປ້ອງ ຈຶ່ງລົງອຸກເຂປນີຍກັມເພາະບໍ່ເຫັນອາບັຕິ" ພິກສຸນີຖຸລລະນັນທາຈຶ່ງຂຶງຄຽດບໍຣິພາສຄນະວ່າ "ພິກສຸນີພວກນີ້ໂງ່ງ່າວ ພິກສຸນີພວກນີ້ບໍ່ສລາດ ພິກສຸນີພວກນີ້ບໍ່ຮູ້ຈັກກັມ ໂທສຂອງກັມ ກັມວິບັຕິຫລືກັມສົມບັຕ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງຂຶງຄຽດບໍຣິພາສຄນະລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸ

ທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາເຄືອງຄຽດ ບໍຣິພາສຄນະ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງຂຶງຄຽດບໍຣິພາສຄນະ ລະພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໖໔] ກໍພິກສຸນີໃດຂຶງຄຽດ ບໍຣິພາສຄນະ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຈັນທກາລີ ຈົບ

**ສິກຂາບົທວິພັງຄ໌**

[໑໐໖໕] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຂຶງຄຽດ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຄວາມໂກດ

ທີ່ຊື່ວ່າ ຄນະ ຕຣັສຫມາຍເຖິງພິກສຸນີສົງຄ໌

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ຝ. ອາຣາມວັຄ ສິກຂາບົດທີ ໖ ອນາປັຕຕິວາຣ

ຄຳວ່າ ບໍຣິພາສ ຄື ບໍຣິພາສວ່າ "ພິກສຸນີພວກນີ້ໂງ່ງ່າວ ພິກສຸນີພວກນີ້ບໍ່ສລາດ ພິກສຸນີພວກນີ້ບໍ່ຮູ້ຈັກກັມ ໂທສຂອງກັມ ກັມວິບັຕິ ຫລືກັມສົມບັຕ" ຕ້ອງອາບັຕິປາຈິຕຕິຍ໌ ບໍຣິພາສພິກສຸນີຫລາຍຮູບ ພິກສຸນີຮູບດຽວ ຫລືອນຸປສັມບັນ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໖໗] ໑. ພິກສຸນີນຸ່ງອັນຖະ
໒. ພິກສຸນີນຸ່ງຫຼົມ
໓. ພິກສຸນີນຸ່ງສົ່ງສອນ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໓ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ອາຣາມວັຄ ສິກຂາບົດທີ ໔ ນິທານ ວັຕຖຸ**

**໗. ອາຣາມວັຄ**

**ສິກຂາບົດທີ ໔**

ວ່າດ້ວຍການສັນຂອງຄ້ຽວຂອງສັນເມື່ອຫ້າມພັຕຕາຫານແລ້ວ

**ເຣື້ອງພິກສຸນີສັນຫລາຍທີ່ໃນນີ້ດຽວກັນ**

[໑໐໖໘] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພຣາມນ໌ຄົນນຶ່ງນິມົນຕ໌ພິກສຸນີທັງຫລາຍໃຫ້ສັນ ພວກພິກສຸນີສັນແລ້ວ ຫ້າມພັຕຕາຫານແລ້ວ ພາກັນໄປຕະກູນຍາຕພິກສຸນີບາງພວກຍັງສັນອີກ ບາງພວກນຳບິນທບາຕກັບໄປ ຄັ້ງນັ້ນ ພຣາມນ໌ນັ້ນໄດ້ກ່າວກັບເພື່ອນບ້ານດັ່ງນີ້ວ່າ "ນາຍທັງຫລາຍເຮົາລ້ຽງພິກສຸນີໃຫ້ອີ່ມຫນຳແລ້ວ ເຊີນມາເຖີດ ເຮົາຈັກລ້ຽງພວກທ່ານໃຫ້ອີ່ມຫນຳແດ່" ເພື່ອນບ້ານຜູ້ຄຸ້ນເຄີຍເຫລົ່ານັ້ນກ່າວຢ່າງນີ້ວ່າ "ນາຍທ່ານຈະລ້ຽງພວກເຮົາໃຫ້ອີ່ມໄດ້ຢ່າງໃດ ແມ່ນພວກພິກສຸນີທີ່ທ່ານນິມົນຕ໌ແລ້ວກໍຍັງຕ້ອງໄປທີ່ເຮືອນພວກເຮົາ ບາງພວກຍັງສັນອີກ ບາງພວກກໍນຳບິນທບາຕກັບໄປ" ພຣາມນ໌ຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັນທີ່ເຮືອນເຮົາແລ້ວຍັງໄປສັນທີ່ອື່ນອີກລະ ເຮົາບໍ່ສາມາດທີ່ຈະຖວາຍໃຫ້ພໍແກ່ຄວາມຕ້ອງການຫລື" ພິກສຸນີທັງຫລາຍໄດ້ຍິນພຣາມນ໌ຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັນແລ້ວ ຫ້າມພັຕຕາຫານແລ້ວຍັງສັນໃນທີ່ອື່ນອີກ"

ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເອື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເອື້ອງນີ້ໄປຊາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າພວກພິກສຸນີສັນແລ້ວ ຫ້າມພັຕຕາຫາຣແລ້ວຍັງສັນໃນທີ່ອື່ນອີກ ແມ່ນແທ້ບໍ" ພິກສຸທັງຫລາຍທູລຣັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັນແລ້ວຫ້າມພັຕຕາຫາຣແລ້ວຍັງສັນໃນທີ່ອື່ນອີກລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໓໗] ກໍພິກສຸນີໃດໄດ້ຮັບນິມົນຕ໌ແລ້ວ ບອກຫ້າມພັຕຕາຫາຣແລ້ວ ຄ້ຽວຂອງຄ້ຽວ ຫລືສັນຂອງສັນ ຕ້ອງອາບັຕິປາຈິຕຕີຍ໌

ເອື້ອງພິກສຸນີສັນຫລາຍທີ່ໃນມື້ດຽວກັນ ຈົບ

**ສິກຂາບົທວິພັງຄ໌**

[໑໐໓໙] ຄຳວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ໄດ້ຮັບນິມົນຕ໌ແລ້ວ ຄື ໄດ້ຮັບນິມົນຕ໌ດ້ວຍໂພຊນະ ໕ ຊນິດ ຢ່າງໃດຢ່າງນຶ່ງ

**ລັກສນະກາຣບອກຫ້າມພັຕຕາຫາຣ**

ທີ່ຊື່ວ່າ ບອກຫ້າມພັຕຕາຫາຣແລ້ວ ຄື (໑) ພິກສຸນີກຳລັງສັນ (໒) ທາຍົກນຳໂພຊນະມາຖວາຍ (໓) ທາຍົກຢູ່ໃນຫັຕຖບາສນ້ອມຖວາຍ (໔) ພິກສຸນີບອກຫ້າມ

ທີ່ຊື່ວ່າ ຂອງຄ້ຽວ ຄື ຍົກເວັ້ນໂພຊນະ ໕ ເຂົ້າປຽກ ຍາມກາລິກ ສັຕຕາຫກາລິກແລະຍາວຊີວິກ໑

ນອກນັ້ນຊື່ວ່າຂອງຄ້ຽວ
ທີ່ຊື່ວ່າ ຂອງສັນ ໄດ້ແກ່ ໂພຊນະ ໕ ຢ່າງ ຄື ເຂົ້າສຸກ ຂນົມສູດ ເຂົ້າຕູ ປາ ຊີ້ນ

**ໝາຍເຫດ :**
໑ ດູ ໝາຍເຫດພຣະວິນັຍປິດົກແປລ ເຫລັ້ມ ໔ ຂໍ້ ໔໓໙ ຫນ້າ ໓໙໕

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ຝ. ອາຮາມວັຄ ສິກຂາບົດທີ ໔ ອນາປັຕຕິວາຣ

ພິກສຸນີຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຄ້ຽວ ຈະສັນ" ຕ້ອງອາບັຕິທຸກກະຕະ ສັນ ຕ້ອງອາບັຕິປາຈິຕຕີຍ໌ທຸກໆຄຳກືນ

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໔໐] ໄດ້ຮັບນິມົນຕ໌ແລ້ວ ພິກສຸນີສຳຄັນວ່າໄດ້ຮັບນິມົນຕ໌ແລ້ວ ຄ້ຽວຂອງຄ້ຽວຫລືສັນຂອງສັນ ຕ້ອງອາບັຕິປາຈິຕຕີຍ໌
ໄດ້ຮັບນິມົນຕ໌ແລ້ວ ພິກສຸນີບໍ່ແນ່ໃຈ ຄ້ຽວຂອງຄ້ຽວ ຫລືສັນຂອງສັນ ຕ້ອງອາບັຕິປາຈິຕຕີຍ໌
ໄດ້ຮັບນິມົນຕ໌ແລ້ວ ພິກສຸນີສຳຄັນວ່າຍັງບໍ່ໄດ້ຮັບນິມົນຕ໌ ຄ້ຽວຂອງຄ້ຽວ ຫລືສັນຂອງສັນ ຕ້ອງອາບັຕິປາຈິຕຕີຍ໌

**ທຸກທຸກກະຕະ**

ພິກສຸນີຮັບປະເຄນຍາມກາລິກ ສັຕຕາຫກາລິກ ຍາວຊີວິກ ເພື່ອເປັນອາຫາຣ ຕ້ອງອາບັຕິທຸກກະຕະ ສັນ ຕ້ອງອາບັຕິທຸກກະຕະທຸກໆຄຳກືນ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໐໔໑] ໑. ພິກສຸນີທີ່ຫາຍົກບໍ່ໄດ້ນິມົນຕ໌
໔. ພິກສຸນີຍັງບໍ່ຫ້າມພັຕຕາຫາຣ

໓. ພິກຂຸນີດື່ມເຂົ້າປຽກ

໔. ພິກຂຸນີບອກເຈົ້າຂອງແລ້ວສັນ

໕. ພິກຂຸນີສັນຂອງທີ່ເປັນຢາອກາລິກ ສັຕຕາຫະກາລິກແລະຍາວຊີວິກເມື່ອມີ
ເຫຕຸຜົລຈຳເປັນ

໖. ພິກຂຸນີວິກົລຈິຕ

໗. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໖. ອາຣາມວັຄ ສິກຂາບົດທີ ໕ ນິທານວັຕຖຸ**

**໖. ອາຣາມວັຄ**

**ສິກຂາບົດທີ ໕**

ວ່າດ້ວຍຄວາມຫວງຕະກູນ

**ເຣື້ອງພິກຂຸນີຫວງຕະກູນ**

[໑໐໔໘] ສະມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີຮູບນຶ່ງທ່ຽວບິນທະບາຕໃນທາງຮ່ອມແຫ່ງນຶ່ງໃນກຸງສາວັຕຖີ ເຂົ້າໄປທີ່ຕະກູນແຫ່ງນຶ່ງ ນັ່ງເທິງອາສນະທີ່ເຂົາປູໄວ້ ຄັນຄົນທັງຫລາຍນິມົນຕ໌ທ່ານໃຫ້ສັນແລ້ວກ່າວດັ່ງນີ້ວ່າ "ແມ່ນພິກຂຸນີອື່ນໆກໍນິມົນຕ໌ມາເຖີດຂະນ້ອຍ" ຂະນະນັ້ນ ພິກຂຸນີນັ້ນຄິດວ່າ ເຮັດຢ່າງໃດ ພິກຂຸນີອື່ນໆຈຶ່ງຈະບໍ່ມາ ຈຶ່ງເຂົ້າໄປຫາພິກຂຸນີທັງຫລາຍບອກວ່າ "ໃນທີ່ພຸ້ນສຸນັກດຸໂຄດຸ ສະຖານທີ່ນີ້ນ ພວກທ່ານຢ່າໄປທີ່ນັ້ນເລີຍ" ພິກຂຸນີແມ່ນອີກຮູບນຶ່ງໄດ້ໄປບິນທະບາຕທີ່ທາງຮ່ອມນັ້ນ ເຂົ້າໄປທີ່ຕະກູນນັ້ນຕັ້ງຢູ່ຄັນແລ້ວນັ່ງເທິງອາສນະທີ່ເຂົາປູໄວ້ ລຳດັບນັ້ນ ຄົນທັງຫລາຍນິມົນຕ໌ໃຫ້ພິກຂຸນີນັ້ນສັນແລ້ວໄດ້ກ່າວດັ່ງນີ້ວ່າ "ແມ່ເຈົ້າ ເປັນຫຍັງພິກຂຸນີທັງຫລາຍຈຶ່ງບໍ່ມາ" ຄັ້ງນັ້ນ ພິກຂຸນີນັ້ນບອກເຣື້ອງນັ້ນໃຫ້ຄົນທັງຫລາຍຊາບ ຄົນທັງຫລາຍຈຶ່ງຕຳໜິ ປະນາມໂພນທະນາວ່າ "ຈັ່ງໃດພິກຂຸນີຈຶ່ງຫວງຕະກູນລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຫາວງຕະກູນ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງຫາວງຕະກູນລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ຝ. ອາຣາມວັຄ ສິກຂາບົດທີ ໕ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໐໔໓] ກໍພິກສຸນີໃດຫາວງຕະກູນ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຫາວງຕະກູນ ຈົບ

**ສິກຂາບົທວິພັງຄ໌**

[໑໐໔໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . ໃດ ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຕະກູນ ຫມາຍເຖິງຕະກູນ ໔ ໄດ້ແກ່ ຕະກູນກສັຕຣິຍ໌ ຕະກູນພຣາມນ໌ ຕະກູນແພສຍ໌ ຕະກູນສູທຣ

ທີ່ຊື່ວ່າ ຫາວງ ຄື ພິກສຸນີກ່າວໂທສຂອງຕະກູນໃນສຳນັກພິກສຸນີທັງຫລາຍດ້ວຍປະສົງຄ໌ວ່າ "ເຮັດຢ່າງໃດ ພິກສຸນີທັງຫລາຍຈຶ່ງຈະບໍ່ມາ" ຕ້ອງອາບັຕິປາຈິຕຕິຍ໌ ຫລືກ່າວໂທສພິກສຸນີໃນສຳນັກຕະກູນ ຕ້ອງອາບັຕິປາຈິຕຕິຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໔໕] ໑. ພິກສຸນີບໍ່ໄດ້ຫາວງຕະກູນແຕ່ບອກສະເພາະໂທສທີ່ມີຢູ່
໔. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໖. ອາຣາມວັຄ ສິກຂາບົດທີ ໖ ນິທານວັຕຖຸ

## ໖. ອາຣາມວັຄ

### ສິກຂາບົດທີ ໖

ວ່າດ້ວຍການຢູ່ຈຳພັນສາໃນອາວາສທີ່ບໍ່ມີພິກສຸ

### ເຣື້ອງພິກສຸນີຫລາຍຮູບ

[໑໐໔໖] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຫລາຍຮູບອອກພັນສາແລ້ວໃນອາວາສໃກ້ໝູ່ບ້ານ ພາກັນໄປກຸງສາວັຕຖີ ພິກສຸນີທັງຫລາຍໄດ້ກ່າວກັບພິກສຸນີເຫລົ່ານັ້ນດັ່ງນີ້ວ່າ “ແມ່ເຈົ້າທັງຫລາຍຈຳພັນສາທີ່ໃດ ໂອວາທສັມຣິທທິ໌ຜົລດີລະຫລື” ພິກສຸນີເຫລົ່ານັ້ນຕອບວ່າ “ແມ່ເຈົ້າ ໃນອາວາສທີ່ພວກເຮົາຈຳພັນສາບໍ່ມີພິກສຸເລີຍ ໂອວາທຈັກສັມຣິທທິ໌ຜົລດີຈາກທີ່ໃດກັນ” ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດ ພວກພິກສຸນີຈຶ່ງຈຳພັນສາໃນອາວາສທີ່ບໍ່ມີພິກສຸລະ”໑ ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີຈຳພັນສາໃນອາວາສທີ່ບໍ່ມີພິກສຸ ແມ່ນແທ້ບໍ່” ພິກສຸທັງຫລາຍທູລຮັບວ່າ “ແມ່ນແທ້ພຣະພຸດທະເຈົ້າຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງຈຳພັນສາໃນອາວາສທີ່ບໍ່ມີພິກສຸລະ ພິກສຸທັງ

ຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ "ອາວາສທີ່ບໍ່ມີພິກສຸ" ຫມາຍເຖິງສຳນັກພິກສຸນີທີ່ບໍ່ມີພິກສຸຜູ້ຈະໃຫ້ໂອວາທຢູ່ພາຍໃນຣະຍະ ໑ ໂຍຊນ໌ ຫລືເສັ້ນທາງທີ່ຈະໄປຍັງສຳນັກພິກສຸນີນັ້ນ ບໍ່ປອດພັຍ ບໍ່ສະດວກ ພິກສຸບໍ່ສາມາດຍ່າງທາງໄປໃຫ້ໂອວາທໄດ້ (ວິ. ອ. ໔/໑໔໙/໓໔໑, ກັງຂາ. ອ. ໓໙໑) ບໍ່ໄດ້ຫມາຍເຖິງອາວາສດຽວກັນກັບພິກສຸ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ອາຣາມວັຄ ສິກຂາບົດທີ ໕ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໐໔໗] ກໍພິກສຸນີໃດຈຳພັນສາໃນອາວາສທີ່ບໍ່ມີພິກສຸ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໐໔໘] ຄຳວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ອາວາສທີ່ຊື່ວ່າ ບໍ່ມີພິກສຸ ໄດ້ແກ່ ອາວາສທີ່ພິກສຸນີບໍ່ສາມາດໄປຮັບໂອວາທຫລືຫຼັມອັນເປັນເຫຕຸຢູ່ຮ່ວມກັນໄດ້໑ ພິກສຸນີຕັ້ງໃຈວ່າ "ຈະຈຳພັນສາ" ແລ້ວຈັດແຈງເສນາສນະ ຕັ້ງນ້ຳສັນນ້ຳໃຊ້ໄວ້ ກວາດບໍຣິເວນະ ຕ້ອງອາບັຕິທຸກກະຕະ ພໍອຣຸນຂຶ້ນ ຕ້ອງອາບັຕິປາຈິຕຕິຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໔໙] ໑. ພິກສຸນີຈຳພັນສາໃນອາວາສທີ່ມີພິກສຸຢູ່ຈຳພັນສາ ຫລີກໄປ ສິກນໍຣະບະພາພຫລືໄປເຂົ້າຮີດເດັຽຣະຖີຍ໌

໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໓. ພິກສຸນີວິກົລຈິຕ

໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

**ໝາຍເຫດ :**

໑ "ໂອວາທ" ຫມາຍເຖິງຄຣຸທັມ ໆ "ທັມອັນເປັນເຫຕຸຢູ່ຮ່ວມກັນ" ຫມາຍເຖິງກາຣສອບຖາມອຸໂບສົຖແລະປວາຣນາ (ວິ. ອ. ໔/໑໐໔໗/໕໑໓, ດູ ຂໍ້ ໑໐໕໕ ຫນ້າ ໔໗໔)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໕. ອາຣາມວັຄ ສິກຂາບົດທີ ໗ ນິທານວັຕຖຸ**

**໕. ອາຣາມວັຄ**

**ສິກຂາບົດທີ ໗**

ວ່າດ້ວຍກາຣບໍ່ປວາຣນາໃນສົງຂ໌ ໒ ຝ່າຍ

**ເຣື້ອງພິກສຸນີຫລາຍຮູບ**

[໑໐໕໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຫລາຍຮູບອອກພັນສາໃນອາວາສໃກ້ຫມູ່ບ້ານແລ້ວພາກັນໄປກຸງສາວັຕຖີ ພິກສຸນີທັງຫລາຍໄດ້ກ່າວກັບພິກສຸນີເຫລົ່ານັ້ນດັ່ງນີ້ວ່າ "ທ່ານທັງຫລາຍຈຳພັນສາທີ່ໃດ ໄດ້ປວາຣນາຕໍ່ພິກສຸສົງຂ໌ແລ້ວຫລື" ພິກສຸນີເຫລົ່ານັ້ນຕອບວ່າ "ພວກເຮົາຍັງບໍ່ໄດ້ປວາຣນາຕໍ່ພິກສຸສົງຂ໌ເລີຍ ຂະນ້ອຍ" ພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຳພັນສາແລ້ວບໍ່ປວາຣນາຕໍ່ພິກສຸສົງຂ໌ລະ"໑ ຄັນແລ້ວ ພິກ ສຸນີເຫລົ່ານັ້ນ

ໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີຈຳພັນສາແລ້ວບໍ່ປວາຣນາຕໍ່ພິກສຸສົງຊ໌ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຣັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຳພັນສາແລ້ວຈຶ່ງບໍ່ປວາຣນາຕໍ່ພິກສຸສົງຊ໌ລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍຯລຯ" ແລ້ວຈຶ່ງຣັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ ວິທີກາຣປວາຣນາຕໍ່ພິກສຸສົງຊ໌ໂດຍຫຍໍ້ ຄືຫລັງຈາກທີ່ໄດ້ປວາຣນາຕໍ່ກັນແລະກັນແລ້ວ ແຕ່ງຕັ້ງພິກສຸນີຮູບນຶ່ງ ດ້ວຍຍັຕຕິທຸຕິຍກັມໃຫ້ເປັນຜູ້ໄປປວາຣນາໃນສຳນັກພິກສຸສົງຊ໌ແທນພິກສຸນີສົງຊ໌ (ວິ. ຈູ. ໗/໔໒໗/໒໕໑, ກັງຂາ. ອ. ໓໗໒-໓໗໓)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໕. ອາຣາມວັຄ ສິກຂາບົທີ ໗ ອນາປັຕຕິວາຣ

**ພຣະບັນຍັດ**

[໑໐໕໑] ກໍພິກສຸນີໃດຈຳພັນສາແລ້ວ ບໍ່ປວາຣນາໃນສົງຊ໌ ໔ ຝ່າຍດ້ວຍຖານະ ໓ ຄື ດ້ວຍໄດ້ເຫັນ ດ້ວຍໄດ້ຍິນ ຫລືດ້ວຍຣະແວງສົງສັຍ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໐໕໔] ຄຳວ່າ ກໍ. . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ຈຳພັນສາແລ້ວ ຄື ຢູ່ຈຳພັນສາຕົ້ນ ໓ ເດືອນ ຫລືພັນສາຫລັງ ໓ ເດືອນ

ພິກສຸນີພອທອດທຸຣະວ່າ " ເຮົາຈະບໍ່ປວາຣນາໃນສິ່ງຂໍ້ ໓ ຝ່າຍດ້ວຍຖານະ ໓ ຄື ດ້ວຍໄດ້ເຫັນ ດ້ວຍໄດ້ຍິນ ຫລືດ້ວຍຣະແວງສົງສັຍ" ຕ້ອງອາບັຕິປາຈິຕຕິຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໕໓] ໑. ພິກສຸນີບໍ່ປວາຣນາໃນເມື່ອມີອັນຕຣາຍ

໒. ພິກສຸນີແສວງຫາແລ້ວແຕ່ບໍ່ໄດ້໑

໓. ພິກສຸນີຜູ້ເປັນໄຂ້

໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໕. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ໝາຍເຫດ :**

໑ ບໍ່ໄດ້ພິກສຸນີ (ວິ. ອ. ໒/໑໐໕໓/໕໑໔)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໖. ອາຣາມວັຄ ສິກຂາບົດທີ ໘ ນິທານວັຕຖຸ**

**໖. ອາຣາມວັຄ**

**ສິກຂາບົດທີ ໘**

ວ່າດ້ວຍການບໍ່ໄປຮັບໂອວາທເປັນຕົ້ນ

### ເລື່ອງພິກສຸນີສັພພັຄຄີຍ໌

[໑໐໕໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ນິໂຄຣທາຣາມເຂດກຸງກະບິລພັສດຸ໌ ແຄວ້ນສັກກະ ຄັ້ງນັ້ນ ພວກພິກສຸສັພພັຄຄີຍ໌ໄປສຳນັກພິກສຸນີແລ້ວກ່າວສອນພວກພິກສຸນີສັພພັຄຄີຍ໌ ພິກສຸນີທັງຫລາຍໄດ້ກ່າວກັບພວກພິກສຸນີສັພພັຄຄີຍ໌ດັ່ງນີ້ວ່າ "ມາເຖີດ ແມ່ເຈົ້າທັງຫລາຍ ພວກເຮົາຈະໄປຮັບໂອວາທ" ພິກສຸນີສັພພັຄຄີຍ໌ກ່າວວ່າ "ພວກເຮົາຈະໄປຮັບໂອວາທເປັນຫຍັງກັນ ພຣະຄຸນເຈົ້າສັພພັຄຄີຍ໌ມາໃຫ້ໂອວາທພວກເຮົາເຖິງທີ່ນີ້ແລ້ວ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ພວກພິກສຸນີສັພພັຄຄີຍ໌ຈຶ່ງບໍ່ໄປຮັບໂອວາທລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ບໍ່ໄປຮັບໂອວາທ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ບໍ່ໄປຮັບໂອວາທລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໐໕໕] ກໍພິກສຸນີໃດບໍ່ໄປຮັບໂອວາທ ຫລືຫຼົມເປັນເຫຕຸຢູ່ຮ່ວມກັນ ຕ້ອງອາບັຕິປາຈິຕຕີຍ໌

ເລື່ອງພິກສຸນີສັພພັຄຄີຍ໌ ຈົບ

### ສິກຂາບົທວິພັງຄ໌

[໑໐໕໖] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ທີ່ຊື່ວ່າ ໂອວາທ ໄດ້ແກ່ ຄຣຸທັມ ໘ ປະການ

ທີ່ຊື່ວ່າ ຫຼັມເປັນເຫຕຸຢູ່ຮ່ວມກັນ ໄດ້ແກ່ ກັມທີ່ທຳຮ່ວມກັນ ອຸທເທສທີ່ສວດຮ່ວມກັນ ຄວາມມີສິກຂາສເມີກັນ

ພິກສຸນີພວທອດຫູຣະວ່າ "ເຮົາຈະບໍ່ໄປຮັບໂອວາທຫລືຫຼັມເປັນເຫຕຸຢູ່ຮ່ວມກັນ" ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໕໗] ໑. ພິກສຸນີບໍ່ໄປຮັບໂອວາທໃນເມື່ອມີອັນຕຣາຍ

໒. ພິກສຸນີແສວງຫາແລ້ວແຕ່ບໍ່ໄດ້ພິກສຸນີເປັນເພື່ອນ

໓. ພິກສຸນີຜູ້ເປັນໄຂ້

໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໕. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ໝາຍເຫດ :**

໑ ຄຣຸຫຼັມ ໗ ປະກາຣນີ້ ພຣະຜູ້ມີພຣະພາກພຸດທະເຈົ້າຂນະທີ່ປະທັບຢູ່ ນະ ກູດາຄາຣສາລາ ປ່າມຫາວັນ ໄດ້ປະທານແກ່ພຣະນາງມຫາປຊາບໍດີໂຄຕມີ ຜູ້ຍ່າງທາງໄກຈາກກຸງບິລພັສດຸ໌ເພື່ອທູລບວຊເປັນພິກສຸນີໃນພຣະພຸທທສາສນາ ນັບເປັນພິກສຸນີຮູບທຳອິດ ແລະເປັນການປະທານຄຣຸຫຼັມຄັ້ງທຳອິດ (ເບິ່ງ ວິນັຍປິດົກແປ ເຫລັ້ມ ໒ ຂໍ້ ໑໔໙ ຫນ້າ ໓໒໔-໓໒໓, ວິ. ຈູ. ໗/໔໐໓/໒໓໓-໒໓໕)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໖. ອາຣາມວັຄ ສິກຂາບົດທີ ໙ ນິທານວັຕຖຸ**

**໖. ອາຣາມວັຄ**

## ສິກຂາບົດທີ ໙
ວ່າດ້ວຍການບໍ່ຖາມອຸໂປສົຖເປັນຕົ້ນ

## ເລື່ອງພິກສຸນີບໍ່ຖາມອຸໂປສົຖ ບໍ່ຂໍໂອວາທ
[໑໐໕໗] ສະໄຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີບໍ່ຖາມອຸໂປສົຖແດ່ ບໍ່ຂໍໂອວາທແດ່ ພິກສຸທັງຫລາຍຈຶ່ງຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງບໍ່ຖາມອຸໂປສົຖແດ່ ບໍ່ຂໍໂອວາທແດ່ລະ"

## ຊົງປະຊຸມສົງຂ໌ບັນຍັດສິກຂາບົທ
ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບໍ່ຖາມອຸໂປສົຖແດ່ ບໍ່ຂໍໂອວາທແດ່ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີບໍ່ຖາມອຸໂປສົຖແດ່ ບໍ່ຂໍໂອວາທແດ່ລະ ພິກສຸທັງຫລາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ
[໑໐໕໙] ກໍພິກສຸນີຄວນຫວັງທັມ ໔ ຢ່າງຈາກພິກສຸສົງຂ໌ທຸກເຄິ່ງເດືອນ ຄືການຖາມອຸໂປສົຖ ໑ ການເຂົ້າໄປຂໍໂອວາທ ໑ ຜູ້ຝ່າຝືນທັມ ໔ ຢ່າງນັ້ນ ຕ້ອງອາບັຕິປາຈິຕຕີຍ໌

ເລື່ອງພິກສຸນີບໍ່ຖາມອຸໂປສົຖ ບໍ່ຂໍໂອວາທ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ຝ. ອາຣາມວັຄ ສິກຂາບົດທີ ໙ ອນາປັຕຕິວາຣ**

## ສິກຂາບົທວິພັງຄ໌
[໑໐໖໐] ຄໍາວ່າ ທຸກເຄິ່ງເດືອນ ຄື ທຸກວັນອຸໂປສົຖ

ທີ່ຊື່ວ່າ ອຸໂປສົຖ ໄດ້ແກ່ ອຸໂປສົຖ ໒ ຢ່າງ ຄື ອຸໂປສົຖວັນ ໑໔ ຄ່ຳ ແລະອຸໂປສົຖວັນ ໑໕ ຄ່ຳ
ທີ່ຊື່ວ່າ ໂອວາທ ໄດ້ແກ່ ຄຣຸທັມ ໆ ຢ່າງ໑
ພິກສຸນີທອດທຸຣະວ່າ "ເຮົາຈະບໍ່ຖາມອຸໂປສົຖແດ່ ຈະບໍ່ຂໍໂອວາທແດ່" ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໖໑] ໑. ພິກສຸນີບໍ່ຖາມອຸໂປສົຖແລະບໍ່ຂໍໂອວາທໃນເມື່ອມີອັນຕຣາຍ

໒. ພິກສຸນີແສວງຫາແລ້ວແຕ່ບໍ່ໄດ້ພິກສຸນີເປັນເພື່ອນ

໓. ພິກສຸນີຜູ້ເປັນໄຂ້

໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໕. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໙ ຈົບ

**ໝາຍເຫດ :**

໑ ດູ ວິນັຍປິດົກແປລ ເຫລັ້ມ ໒ ຂໍ້ ໑໔໙ ຫນ້າ ໓໒໒-໓໒໓, ວິ. ຈູ. ໆ/໔໐໓/໒໓໓-໒໓໕

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໖. ອາຣາມວັຄ ສິກຂາບົດທີ ໑໐ ນິທານວັຕຖຸ**

**໖. ອາຣາມວັຄ**

**ສິກຂາບົດທີ ໑໐**

ວ່າດ້ວຍກາຣໃຫ້ບົ່ງຝີໃນຮົ່ມຜ້າ

**ເຣື້ອງພິກສຸນີຮູບນຶ່ງ**

[໑໐໖໒] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຮູບນຶ່ງໃຫ້ບົ່ງຝີທີ່ເກີດໃນຮົ່ມຜ້າຢູ່ກັນສອງຕໍ່ສອງ

ກັບຊາຍ ລຳດັບນັ້ນ ຊາຍນັ້ນພຍາຍາມຈະຂົ່ມຂືນພິກສຸນີນັ້ນ ທ່ານໄດ້ສົ່ງສຽງຮ້ອງຂຶ້ນ ພິກສຸນີທັງຫລາຍແລ່ນເຂົ້າໄປໄດ້ກ່າວກັບພິກສຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າ ທ່ານສົ່ງສຽງຮ້ອງເປັນຫຍັງ" ທ່ານຈຶ່ງບອກເຣື້ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພິກສຸນີຈຶ່ງໃຊ້ຊາຍໃຫ້ບີ່ງຝີທີ່ເກີດໃນຮົ່ມຜ້າຢູ່ກັນສອງຕໍ່ສອງກັບຊາຍລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີໃຊ້ບຸຣຸສໃຫ້ບີ່ງຝີທີ່ເກີດໃນຮົ່ມຜ້າຢູ່ກັນສອງຕໍ່ສອງກັບບຸຣຸສ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ຈິງພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດ ພິກສຸນີຈຶ່ງໃຊ້ບຸຣຸສໃຫ້ບີ່ງຝີທີ່ເກີດໃນຮົ່ມຜ້າຢູ່ກັນສອງຕໍ່ສອງກັບບຸຣຸສລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງ ດັ່ງນີ້

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ຝ. ອາຣາມວັຄ ສິກຂາບົດທີ ໑໐ ສິກຂາບົທວິພັງຄ໌

**ພຣະບັນຍັດ**

[໑໐໕໓] ກໍພິກສຸນີໃດບໍ່ບອກສົງຊ໌ຫລືຄນະ ໃຊ້ໃຫ້ບີ່ງ ໃຫ້ຜ່າ ໃຫ້ຊະລ້າງໃຫ້ທາ ໃຫ້ພັນ ຫລືໃຫ້ແກະຝີຫລືບາດແຜທີ່ເກີດໃນຮົ່ມຜ້າຢູ່ກັນສອງຕໍ່ສອງກັບຊາຍ ຕ້ອງອາບັຕິປາຈິຕຕີຍ໌໑

ເຣື້ອງພິກສຸນີຮູບນຶ່ງ ຈົບ

**ສິກຂາບົທວິພັງຄ໌**

[໑໐໕໔] ຄຳວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . . ໃດ

ຄໍາວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກຂຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ໃນຮົ່ມຜ້າ ໄດ້ແກ່ ບໍຣິເວນໃຕ້ສາຍບືລົງມາ ເຫນືອເຂົ່າຂຶ້ນໄປ

ຄໍາວ່າ ທີ່ເກີດ ຄື ທີ່ເກີດໃນບໍຣິເວນນັ້ນ

ທີ່ຊື່ວ່າ ຝີ ໄດ້ແກ່ ຝີຊນິດໃດຊນິດນຶ່ງ

ທີ່ຊື່ວ່າ ບາດແຜ ໄດ້ແກ່ ແຜຢ່າງໃດຢ່າງນຶ່ງ

ຄໍາວ່າ ບໍ່ບອກ ຄື ບໍ່ແຈ້ງໃຫ້ຊາບ

ທີ່ຊື່ວ່າ ສົງຄ໌ ພຣະຜູ້ມີພຣະພາກຕຣັສຫມາຍເຖິງພິກຂຸນີສົງຄ໌

ທີ່ຊື່ວ່າ ຄນະ ຕຣັສຫມາຍເຖິງພິກຂຸນີຫລາຍຮູບ

**ໝາຍເຫດ :**

໑ ພິກຂຸນີບໍ່ບອກສົງຄ໌ຫລືຄນະ ໃຊ້ໃຫ້ບີ່ງ ໃຫ້ຜ່າ ໃຫ້ຊະລ້າງ ໃຫ້ທາ ໃຫ້ພັນ ໃຫ້ແກະ ຊາຍນັ້ນທໍາຫມົດທຸກຢ່າງຕາມທີ່ໃຊ້ພິກຂຸນີນັ້ນຕ້ອງອາບັຕິທຸກກະຕະ ໕ ຕົວ ໃນຂນະທີ່ໃຊ້ ເມື່ອຊາຍນັ້ນທໍາເສັດ ພິກຂຸນີຕ້ອງອາບັຕິປາຈິຕຕີຍ໌ ໕ ຕົວ ຫລືແມ່ນຈະໃຊ້ໃຫ້ເຂົາທໍາຕາມທີ່ເຫັນສົມຄວຣ ເມື່ອເຂົາທໍາເສັດທຸກຢ່າງ ກໍຕ້ອງອາບັຕິທຸກກະຕະ ໕ ຕົວ ຕ້ອງອາບັຕິປາຈິຕຕີຍ໌ ໕ ຕົວເຊັ່ນກັນ ແຕ່ຖ້າໃຊ້ໃຫ້ທໍາພຽງຢ່າງດຽວ ແມ່ນຊາຍນັ້ນຈະເຮັດຫມົດທຸກຢ່າງ ກໍຕ້ອງອາບັຕິທຸກກະຕະ ແລະປາຈິຕຕີຍ໌ພຽງ ໑ ຕົວ (ກົງຂາ. ອ. ໖໙໕)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໕. ອາຣາມວັຄ ສິກຂາບົດທີ ໑໐ ອນາປັຕຕິວາຣ

ທີ່ຊື່ວ່າ ຊາຍ ໄດ້ແກ່ ມະນຸສຍ໌ຜູ້ຊາຍ ບໍ່ແມ່ນຍັກສ໌ ບໍ່ແມ່ນເຜດ ບໍ່ແມ່ນສັຕວ໌ເດັຽຣະສານຕົວຜູ້ ແຕ່ເປັນມະນຸສຍ໌ຜູ້ຊາຍທີ່ຮູ້ດຽງສາ ສາມາດທີ່ຈະເຮັດມິດີມິຮ້າຍໄດ້

ຄໍາວ່າ ດ້ວຍກັນ ຄື ໂດຍຄວາມເປັນອັນດຽວກັນ

ຄໍາວ່າ ສອງຕໍ່ສອງ ຄື ບຸຣຸສແລະພິກຂຸນີ

[໑໐໕໕] ພິກຂຸນີສັ່ງວ່າ "ຈົ່ງບີ່ງ" ຕ້ອງອາບັຕິທຸກກະຕະ ເມື່ອບີ່ງເສັດ ຕ້ອງອາບັຕິປາຈິຕຕີຍ໌ ພິກຂຸນີສັ່ງວ່າ "ຈົ່ງຜ່າ" ຕ້ອງອາບັຕິທຸກກະຕະ ເມື່ອຜ່າເສັດ ຕ້ອງອາບັຕິປາຈິຕຕີຍ໌

ພິກຂຸນີສັ່ງວ່າ “ຈົ່ງຊະລ້າງ” ຕ້ອງອາບັດທຸກກະຕະ ເມື່ອຊະລ້າງເສັດ ຕ້ອງອາບັດປາຈິຕຕີຍ໌
ພິກຂຸນີສັ່ງວ່າ “ຈົ່ງຫາ” ຕ້ອງອາບັດທຸກກະຕະ ເມື່ອຫາເສັດ ຕ້ອງອາບັດປາຈິຕຕີຍ໌
ພິກຂຸນີສັ່ງວ່າ “ຈົ່ງພັນ” ຕ້ອງອາບັດທຸກກະຕະ ເມື່ອພັນເສັດ ຕ້ອງອາບັດປາຈິຕຕີຍ໌
ພິກຂຸນີສັ່ງວ່າ “ຈົ່ງແກະ” ຕ້ອງອາບັດທຸກກະຕະ ເມື່ອແກະເສັດ ຕ້ອງອາບັດປາຈິຕຕີຍ໌

**ອນາປັດຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໕໕]

໑. ພິກຂຸນີບອກສີງຂ໌ຫລືຄນະແລ້ວຈຶ່ງໃຫ້ປັ່ງ ໃຫ້ຜ່າ ໃຫ້ຊະລ້າງ ໃຫ້ຫາໃຫ້ພັນຫລືໃຫ້ແກະ
໔. ພິກຂຸນີມີສະຕຣີຜູ້ຮູ້ດຽງສາຢູ່ເປັນເພື່ອນ
໓. ພິກຂຸນີວິກົລຈິຕ
໔. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ
ອາຮາມວັຄທີ ໕ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໑ ນິທານວັຕຖຸ**

**໗. ຄັພພິນີວັຄ**

ຫມວດວ່າດ້ວຍສະຕຣີມີຄັນພ໌

**ສິກຂາບົດທີ ໑**

ວ່າດ້ວຍການບວຊໃຫ້ສະຕຣີມີຄັນພ໌

**ເຣື້ອງພິກຂຸນີຫລາຍຮູບ**

[໑໐໕໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີທັງຫລາຍບວຊໃຫ້ສະຕຣີມີຄັນພ໌ທ່ານຫງວບິນທບາຕ ຄົນທັງຫລາຍກ່າວຢ່າງນີ້ວ່າ “ທ່ານທັງຫລາຍຈົ່ງຖວາຍພິກຂາຫານແກ່ແມ່ເຈົ້າ ແມ່ເຈົ້າ

ນິຄັນພ໌ແກ່” ແລ້ວຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີຈຶ່ງບອຊໃຫ້ສະຕຣີນິຄັນພ໌ລະ” ພິກສຸນີທັງຫລາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີຈຶ່ງບອຊໃຫ້ສະຕຣີນິຄັນພ໌ລະ” ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເອື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເອື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບອຊໃຫ້ສະຕຣີນິຄັນພ໌ແມ່ນແທ້ບໍ” ພິກສຸທັງຫລາຍທູລຮັບວ່າ “ແມ່ນແທ້ພຣະພຸດທະເຈົ້າຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງບອຊໃຫ້ສະຕຣີນິຄັນພ໌ລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິຏົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໑ ບົທພາຊນີຍ໌**

**ພຣະບັນຍັດ**

[໑໐໓໗] ກໍພິກສຸນີໃດບອຊໃຫ້ສະຕຣີນິຄັນພ໌ ຕ້ອງອາບັຕິປາຈິຕຕີຍ໌

ເອື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໐໓໘] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ທີ່ຊື່ວ່າ ສະຕຣີນິຄັນພ໌ ພຣະຜູ້ມີພຣະພາກຕຣັສໝາຍເຖິງຍິງທີ່ມີສັຕວ໌ມາຖືປຕິສນທິ
ຄຳວ່າ ບອຊໃຫ້ ຄື ອຸປສົມບົທໃຫ້

ພິກຂຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສີມມຸດສີມາ ຕ້ອງອາບັດທຸກກະຕະ (ສວດ)ຈົບຍັຕຕິ ຕ້ອງອາບັດທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັດທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັຊຊາຍ໌ ຕ້ອງອາບັດປາຈິດຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັດທຸກກະຕະ

**ບົທພາຊນີຍ໌**

[໑໐໗໐] ສະຕຣີມີຄັນພ໌ ພິກຂຸນີສຳຄັນວ່າມີຄັນພ໌ ບວຊໃຫ້ ຕ້ອງອາບັດປາຈິດຕີຍ໌

ສະຕຣີມີຄັນພ໌ ພິກຂຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັດທຸກກະຕະ

ສະຕຣີມີຄັນພ໌ ພິກຂຸນີສຳຄັນວ່າບໍ່ມີຄັນພ໌ ບວຊໃຫ້ ບໍ່ຕ້ອງອາບັດ

ສະຕຣີບໍ່ມີຄັນພ໌ ພິກຂຸນີສຳຄັນວ່າມີຄັນພ໌ ບວຊໃຫ້ ຕ້ອງອາບັດທຸກກະຕະ

ສະຕຣີບໍ່ມີຄັນພ໌ ພິກຂຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັດທຸກກະຕະ

ສະຕຣີບໍ່ມີຄັນພ໌ ພິກຂຸນີສຳຄັນວ່າບໍ່ມີຄັນພ໌ ບວຊໃຫ້ ບໍ່ຕ້ອງອາບັດ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໑ ອນາປັຕຕິວາຣ

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັດ ຄື

[໑໐໗໑] ໑. ສະຕຣີມີຄັນພ໌ ພິກຂຸນີສຳຄັນວ່າບໍ່ມີຄັນພ໌ ຈຶ່ງບວຊໃຫ້

໒. ສະຕຣີບໍ່ມີຄັນພ໌ ພິກຂຸນີສຳຄັນວ່າບໍ່ມີຄັນພ໌ ຈຶ່ງບວຊໃຫ້

໓. ພິກຂຸນີວິກົລຈິຕ

໔. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໒ ນິທານວັຕຖຸ

## ໆ. ຄັພພິນີວັຄ

**ສິກຂາບົດທີ ໔**

ວ່າດ້ວຍການບວຊໃຫ້ສະຕຣີມີລູກຍັງດື່ມນົມ

**ເຣື່ອງພິກສຸນີຫລາຍຮູບບວຊໃຫ້ສະຕຣີມີລູກຍັງດື່ມນົມ**

[໑໐໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວຊໃຫ້ສະຕຣີມີລູກຍັງດື່ມນົມ ທ່ານຫງອບິນທບາຕ ຄົນທັງຫລາຍກ່າວຢ່າງນີ້ວ່າ "ທ່ານທັງຫລາຍຈົ່ງຖວາຍພິກສາຫານແກ່ແມ່ເຈົ້າ ແມ່ເຈົ້າມີລູກ" ແລ້ວຕຳໜິວ່າ "ຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ສະຕຣີມີລູກຍັງດື່ມນົມລະ" ພິກສຸນີທັງຫລາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ສະຕຣີມີລູກຍັງດື່ມນົມລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວຊໃຫ້ສະຕຣີມີລູກຍັງດື່ມນົມ ແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ສະຕຣີມີລູກຍັງດື່ມນົມລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໗໕] ກໍພິກສຸນີໃດບວຊໃຫ້ສະຕຣີມີລູກຍັງດື່ມນົມ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຫລາຍຮູບໃຫ້ສະຕຣີມີລູກຍັງດື່ມນົມບວຊ ຈົບ

**ສິກຂາບົທວິພັງຄ໌**

[໑໐໗໔] ຄໍາວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ສະຕຣີມີລູກຍັງດື່ມນົມ ໄດ້ແກ່ ສະຕຣີທີ່ເປັນມາຣດາ ຫລືເປັນແມ່ນົມ

ຄໍາວ່າ ບວຊໃຫ້ ຄື ອຸປສົມບົທໃຫ້

ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດ ສີມາ ຕ້ອງອາບັຕິທຸກກະຕະ (ສວດ)ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງ ອາບັຕິທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຊາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ບົທພາຊນີຍ໌**

[໑໐໗໕] ສະຕຣີມີລູກຍັງດື່ມນົມ ພິກສຸນີສໍາຄັນວ່າມີລູກຍັງດື່ມນົມ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

ສະຕຣີມີລູກຍັງດື່ມນົມ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ສະຕຣີມີລູກຍັງດື່ມນົມ ພິກສຸນີສໍາຄັນວ່າບໍ່ມີລູກຍັງດື່ມນົມ ບວຊໃຫ້ ບໍ່ຕ້ອງອາບັຕິ

ສະຕຣີບໍ່ມີລູກຍັງດື່ມນົມ ພິກສຸນີສໍາຄັນວ່າມີລູກຍັງດື່ມນົມ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ສະຕຣີບໍ່ມີລູກຍັງດື່ມນົມ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ສະຕຣີບໍ່ມີລູກຍັງດື່ມນົມ ພິກສຸນີສໍາຄັນວ່າບໍ່ມີລູກຍັງດື່ມນົມ ບວຊໃຫ້ ບໍ່ຕ້ອງອາບັຕິ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໓ ອນາປັຕຕິວາຣ**

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໗໖] ໑. ສະຕຣີມີລູກຍັງດື່ມນົມ ພິກສຸນີສໍາຄັນວ່າບໍ່ມີລູກຍັງດື່ມນົມ ຈຶ່ງບວຊໃຫ້

໒. ສະຕຣີບໍ່ມີລູກຍັງດື່ມນົມ ພິກສຸນີສໍາຄັນວ່າບໍ່ມີລູກຍັງດື່ມນົມ ຈຶ່ງບວຊໃຫ້

໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ໓ ນິທານວັຕຖຸ**

**໗. ຄັພພິນີວັຄ**

**ສິກຂາບົດທີ ໓**
ວ່າດ້ວຍການບວຊໃຫ້ສິກຂມານາຜູ້ຍັງບໍ່ໄດ້ສຶກສາຫຼັກ ໓ ຂໍ້ຕລອດ ໒ ປີ

**ເຣື້ອງພິກສຸນີຫລາຍຮູບ**
[໑໐໗໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວຊໃຫ້ສິກຂມານາຜູ້ບໍ່ໄດ້ສຶກສາສິກຂາໃນຫຼັກ ໓ ຂໍ້໑ຕລອດ ໒ ປີ ສິກຂມານາຜູ້ບວຊເປັນພິກສຸນີເຫລົ່ານັ້ນໂງ່ງ່າວ ບໍ່ສລາດ ບໍ່ຮູ້ສິ່ງທີ່ຄວຣຫລືບໍ່ຄວຣ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ສິກຂມານາຜູ້ບໍ່ໄດ້ສຶກສາສິກຂາໃນຫຼັກ ໓ ຂໍ້ຕລອດ ໒ ປີລະ” ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**
ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວຊໃຫ້ສິກຂມານາຜູ້ຍັງບໍ່ໄດ້ສຶກສາສິກຂາໃນຫຼັກ ໓ ຂໍ້ຕລອດ ໒ ປີ ແມ່ນແທ້ບໍ” ພິກສຸທັງຫລາຍທູລຮັບວ່າ “ແມ່ນແທ້ພຣະພຸດທະເຈົ້າຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກສຸທັງຫລາຍຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ສິກຂມານາຜູ້ຍັງບໍ່ໄດ້ສຶກສາສິກຂາໃນຫຼັກ ໓ ຂໍ້ຕລອດ ໒ ປີລະ ພິກສຸທັງຫລາຍ ການ

ກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂື້ນໄດ້ເລີຍ ຯລຯ" ຄັນຊົງຕຳຫນິແລ້ວ ຊົງ

**ໝາຍເຫດ :**

໑ ຫມາຍເຖິງອນຸປສັມບັນຫລືສາມເນຣີຜູ້ໃຄ່ສຶກສາ ແຕ່ຍັງບໍ່ມີພິກສຸນີໃດໃຫ້ສິກຂາຫລືມີສິກຂາເສັ່ງໄປ ທີ່ໄດ້ຊື່ວ່າສິກຂມານາ ເພາະສຶກສາໃນທັມ ໖ ຂໍ້ ຫລືທັມກ່າວຄືສິກຂາເຫລົ່ານັ້ນ (ກງ໌ຂາ. ໑. ໓໙໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໖ ນິທານວັຕຖຸ**

ສະແດງທັມມີກຖາ ແລ້ວຮັບສັ່ງກັບພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ເຮົາອນຸຍາຕໃຫ້ພິກສຸນີສົງຂ໌ໃຫ້ສິກຂາສົມມຸດ໑ໃນທັມ ໖ ຂໍ້ ເປັນເວລາ ໒ ປີແກ່ສິກຂມານາພິກສຸທັງຫລາຍ ສົງຂ໌ຄວນໃຫ້ສິກຂາສົມມຸດຢ່າງນີ້

**ວິທີຂໍສິກຂາສົມມຸດແລະກັມວາຈາໃຫ້ສິກຂາສົມມຸດ**

ສິກຂມານານັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີທັງຫລາຍແລ້ວນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂະນ້ອຍຊື່ນີ້ເປັນສິກຂມານາຂອງແມ່ເຈົ້າຊື່ນີ້ ຂໍສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີຕໍ່ສົງຂ໌" ຄວນຂໍແມ່ນຄັ້ງທີ ໒ ຄວນຂໍແມ່ນຄັ້ງທີ ໓ ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຂ໌ຊາບ ດ້ວຍຍັຕຕິທຸຕິຍກັມວາຈາວ່າ

[໑໐໗໗] ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ສິກຂມານາຊື່ນີ້ຂອງແມ່ເຈົ້າຊື່ນີ້ຂໍສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີຕໍ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວກໍຄວນໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີແກ່ສິກຂມານາຊື່ນີ້ ນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ສິກຂມານາຊື່ນີ້ຂອງແມ່ເຈົ້າຊື່ນີ້ ຂໍສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີຕໍ່ສົງຂ໌ ສົງຂ໌ໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ ເປັນເວລາ ໒ ປີແກ່ສິກຂມານາຊື່ນີ້ ແມ່ເຈົ້າຮູບໃດເຫັນດ້ວຍກັບການໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີແກ່ສິກຂມານາຊື່ນີ້ ແມ່ເຈົ້າຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງ ສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີ ສົງຂ໌

ໃຫ້ແກ່ສີກຂມານາຊື່ນີ້ແລ້ວ ສົງຊ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນີ້ງນັ້ນເປັນມະຕິຢ່າງນີ້

[໑໐໗໙] ຄວນບອກສີກຂມານາຜູ້ນັ້ນວ່າ "ທ່ານຈົ່ງກ່າວຢ່າງນີ້ວ່າ
໑. ຂະນ້ອຍຂໍສມາທານງົດເວັ້ນຈາກການຂ້າສັດ ໂດຍບໍ່ລ່ວງລະເມີດຕລອດ ໔ ປີ
໔. ຂະນ້ອຍຂໍສມາທານງົດເວັ້ນຈາກການຖືເອົາຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍບໍ່ລ່ວງລະເມີດຕລອດ ໔ ປີ

**ໝາຍເຫດ :**
໑ ສີກຂາສົມມຸດ ຄືຂ້ອຕົກລົງ ຍິນຍອມຮ່ວມກັນທີ່ຈະໃຫ້ສີກຂມານານັ້ນສຶກສາໃນຫຼັມ ຝັ ຂໍ້ເປັນເວລາ ໔ ປີ

໓. ຂະນ້ອຍຂໍສມາທານງົດເວັ້ນຈາກພຣືຕິກັມອັນບໍ່ແມ່ນພຣົມຈັນຍ໌໑ ໂດຍບໍ່ລ່ວງລະເມີດຕລອດ ໔ ປີ
໔. ຂະນ້ອຍຂໍສມາທານງົດເວັ້ນຈາກການເວົ້າເທັຈ ໂດຍບໍ່ລ່ວງລະເມີດຕລອດ ໔ ປີ
໕. ຂະນ້ອຍຂໍສມາທານງົດເວັ້ນຈາກນ້ຳເມົາຄືສຸຣາແລະເມຣັຍອັນເປັນທີ່ຕັ້ງແຫ່ງຄວາມປມາດ ໂດຍບໍ່ລ່ວງລະເມີດຕລອດ ໔ ປີ
໖. ຂະນ້ອຍຂໍສມາທານງົດເວັ້ນຈາກການບໍຣິໂພຄອາຫາຣໃນເວລາວິກາລ ໂດຍບໍ່ລ່ວງລະເມີດຕລອດ ໔ ປີ"
ພຣະຜູ້ມີພຣະພາກຄັນຊົງຕຳຫນິພິກສຸນີເຫລົ່ານັ້ນໂດຍປະການຕ່າງໆ ແລ້ວຕຣັສໂທສແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຣັບສັ່ງໃຫ້ພິກສຸນີທັງຫລາຍຍົກສີກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**
[໑໐໗໐] ກໍພິກສຸນີໃດບວຊໃຫ້ສີກຂມານາຜູ້ຍັງບໍ່ໄດ້ສຶກສາສີກຂາໃນຫຼັມ ຝັ ຂໍ້ ຕລອດ ໔ ປີ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໐໗໑] ຄຳວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ຕລອດ ໔ ປີ ຄື ສິ້ນ ໔ ປີ

**ຫມາຍເຫດ :**

໑ ພຣືຕິກັມອັນບໍ່ແມ່ນພຣົມຈັນຍ໌ ຫມາຍເຖິງການເສພເມຖຸນກັມ (ການຮ່ວມສັງວາສ) (ຊ. ຊ. ອ. ໑໗)

**ພຣະວິນັຍປີດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ໖ ບົທພາຊນີຍ໌**

ທີ່ຊື່ວ່າ ຜູ້ຍັງບໍ່ໄດ້ສຶກສາສິກຂາ ຄື ພິກສຸນີສົງຂ໌ຍັງບໍ່ໄດ້ໃຫ້ສິກຂາ ຫລືໃຫ້ແລ້ວແຕ່ທ່ານທຳຂາດ

ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້

ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣ ຫລືຈີວອນຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຢາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໗໔] ກັມທີ່ທຳຖືກຕ້ອງ໑ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

**ຕິກທຸກກະຕະ**
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

**ໝາຍເຫດ :**
໑ ກັມທີ່ທຳຖືກຕ້ອງ ຫມາຍເຖິງກັມອາຈາສູດໃຫ້ສິກຂາສົມບັຕດັ່ງກ່າວຂ້າງຕົ້ນ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໕ ອນາປັຕຕິວາຣ**

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໐໗໕] ໑. ພິກສຸນີບວຊໃຫ້ສິກຂມານາຜູ້ໄດ້ສຶກສາສິກຂາໃນທຳມ ໖ ຂໍ້ ຕລອດ ໒ ປີ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໔ ນິທານວັຕຖຸ**

**໗. ຄັພພິນີວັຄ**

**ສິກຂາບົດທີ ໔**
ວ່າດ້ວຍການບວຊໃຫ້ສິກຂມານາທີ່ສົງຄ໌ຍັງບໍ່ໄດ້ສົມມຸດ

**ເຣື້ອງພິກສຸນີຫລາຍຮູບ**
[໑໐໗໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖ

ບິນຫົກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວຊໃຫ້ສິກຂມານາຜູ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີ ແຕ່ສົງຂ໌ຍັງບໍ່ໄດ້ສົມມຸດ ພິກສຸນີທັງຫລາຍກ່າວຢ່າງນີ້ວ່າ "ສິກຂມານາທັງຫລາຍ ພວກທ່ານຈົ່ງມານີ້ ຈົ່ງຮູ້ສິ່ງນີ້ ປະເຄນສິ່ງນີ້ ນຳສິ່ງນີ້ມາສັນຕ້ອງກາຣສິ່ງນີ້ ຈົ່ງທຳສິ່ງນີ້ໃຫ້ເປັນກັປປິຍະ" ສິກຂມານາເຫລົ່ານັ້ນຕອບວ່າ "ແມ່ເຈົ້າ ພວກຂະນ້ອຍບໍ່ແມ່ນສິກຂມານາພວກຂະນ້ອຍເປັນພິກສຸນີ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພວກພິກສຸນີຈຶ່ງບວຊໃຫ້ສິກຂມານາຜູ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີ ແຕ່ສົງຂ໌ຍັງບໍ່ໄດ້ສົມມຸດລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເອື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເອື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

ຊົງປະຊຸມບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເອື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີທັງຫລາຍບວຊໃຫ້ສິກຂມານາຜູ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແຕ່ສົງຂ໌ຍັງບໍ່ໄດ້ສົມມຸດ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ"ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ສິກຂມານາຜູ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແຕ່ສົງຂ໌ຍັງບໍ່ໄດ້ສົມມຸດລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ຄັນຊົງຕຳຫນິແລ້ວ ຊົງສະແດງທັມມີກະຖາ ແລ້ວຮັບສັ່ງກັບພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ເຮົາອນຸຍາຕໃຫ້ພິກສຸນີສົງຂ໌ໃຫ້ອຸຕຖານສົມມຸດແກ່ສິກຂມານາຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ພິກສຸທັງຫລາຍ ສົງຂ໌ຄວນໃຫ້ອຸຕຖານສົມມຸດ໑ ຢ່າງນີ້

**ວິທີຂໍອຸຕຖານສົມມຸດແລະກັມວາຈາໃຫ້ອຸຕຖານສົມມຸດ**

ສິກຂມານາຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວນັ້ນຄວນເຂົ້າໄປຫາສົງຂ໌ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີທັງຫລາຍ ນັ່ງຄຸເຂົ່າ ປະນົມມືກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂະນ້ອຍຊື່ນີ້ເປັນສິກຂມານາຂອງແມ່ເຈົ້າຊື່ນີ້ ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ຂໍອຸຕຖານສົມມຸດຕໍ່ສົງຂ໌" ຄວນຂໍແມ່ນຄັ້ງທີ ໔ ຄວນຂໍແມ່ນຄັ້ງທີ ໓ ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຂ໌ຊາບດ້ວຍຍັຕຕິທຸຕິຍກັມວາຈາວ່າ

[໑໐໗໕] "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ສິກຂມານາຊື່ນີ້ຂອງແມ່ເຈົ້າຊື່ນີ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ຂອອຸຕຖານສົມມຸດຕໍ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວກໍຄວນໃຫ້ອຸຕຖານສົມມຸດແກ່ສິກຂມານາຊື່ນີ້ຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ສິກຂມານາຊື່ນີ້ຂອງແມ່ເຈົ້າຊື່ນີ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ຂອອຸຕຖານສົມມຸດຕໍ່ສົງຂ໌ ສົງຂ໌ໃຫ້ອຸຕຖານສົມມຸດແກ່ສິກຂມານາຊື່ນີ້ຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ແມ່ເຈົ້າຮູບໃດເຫັນດ້ວຍກັບການໃຫ້ອຸຕຖານສົມມຸດແກ່ສິກຂມານາຊື່ນີ້ຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີ ແລ້ວ ແມ່ເຈົ້າຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງ

**ໝາຍເຫດ :**

໑ ອຸຕຖານສົມມຸດ ແປວ່າ ສົມມຸດການບວຊ ຫມາຍເຖິງການຮັບຮອງໃຫ້ບວຊໄດ້ ກັມຊນິດນີ້ ພິກສຸນີສົງຂ໌ຈະໃຫ້ແກ່ສິກຂມານາຜູ້ສຶກສາປະພຶດຕາມທັມ ຝ ຂໍ້ ຄົບ ໔ ປີ ອຸຕຖານສົມມຸດຖືເປັນປະກາດນີຍບັຕຮັບຮອງໃຫ້ບວຊເປັນພິກສຸນີໄດ້

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ໔ ສິກຂາບົທວິພັງຄ໌

ອຸຕຖານສົມມຸດສົງຂ໌ໃຫ້ແລ້ວແກ່ສິກຂມານາຊື່ນີ້ຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ ຕລອດ ໔ ປີແລ້ວ ສົງຂ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້" ພຣະຜູ້ມີພຣະພາກຄັນຊົງຕຳໜິພິກສຸນີເຫລົ່ານັ້ນໂດຍປະການຕ່າງໆແລ້ວຕຣັສໂທສແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ" ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໗໖] ກໍພິກສຸນີໃດບວຊໃຫ້ສິກຂມານາຜູ້ສຶກສາສິກຂາໃນທັມ ຝ ຂໍ້ ຕລອດ ໔ ປີ ແລ້ວ ແຕ່ສົງຂ໌ຍັງບໍ່ໄດ້ສົມມຸດ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໐໗໗] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌
ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ຕລອດ ໔ ປີ ຄື ສິ້ນ ໔ ປີ
ທີ່ຊື່ວ່າ ຜູ້ສຶກສາສິກຂາ ຄື ໄດ້ສຶກສາສິກຂາໃນທັມ ຝ ຂໍ້ແລ້ວ
ທີ່ຊື່ວ່າ ແຕ່ສົງຊ໌ຍັງບໍ່ໄດ້ສົມມຸດ ຄື ແຕ່ສົງຊ໌ຍັງບໍ່ໄດ້ໃຫ້ວຸຕຖານສົມມຸດດ້ວຍຍັຕຕິທຸຕິຍກັມ
ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້ພິກສຸນີຕັ້ງໃຈວ່າ “ຈະບວຊໃຫ້” ແລ້ວແສວງຫາຄນະ
ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ
ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນ
ອຸປັຊຊາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໐໗໘] ກັມທີ່ທຳຖືກຕ້ອງ໑ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ຕ້ອງອາບັຕິ
ປາຈິຕຕີຍ໌
ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໗໙] ໑. ພິກສຸນີບວຊໃຫ້ສິກຂມານາຜູ້ໄດ້ສຶກສາສິກຂາໃນທັມ ໒ ຂໍ້ ຕລອດ ໒ ປີ ທີ່ສົງຄ໌ສົມມຸດແລ້ວ

໒. ພິກສຸນີວິກົລຈິຕ

໓. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ໝາຍເຫດ :**

໑ ກັມທີ່ທຳຖືກຕ້ອງ ຫມາຍເຖິງກັມວາຈາໃຫ້ວຸຕຖານສົມມຸດ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໕ ນິທານວັຕຖຸ**

**໗. ຄັພພິນີວັຄ**

**ສິກຂາບົດທີ ໕**

ວ່າດ້ວຍການບວຊໃຫ້ຍິງທີ່ມີຄອບຄົວອາຍຸຕ່ຳກວ່າ ໑໒ ປີ

**ເຣື້ອງພິກສຸນີຫລາຍຮູບ**

[໑໐໘໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໒ ປີ໑ ຍິງທີ່ບວຊເປັນພິກສຸນີເຫລົ່ານັ້ນບໍ່ອົດທົນ ບໍ່ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມຫິວ ສັມຜັສຈາກເຫລືອບ ຍຸງ ລົມ ແດດ ສັຕວ໌ເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນເປັນທຸກຂ໌ແສນສາຫັສ ຮຸນແຮງ ເຜັດຮ້ອນ ທີ່ບໍ່ນ່າຍິນດີ ບໍ່ຫນ້າພໍໃຈເກືອບຈະລ້າງຜານຊີວິຕບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນ ທະນາວ່າ "ຈັ່ງໃດ ພວກພິກສຸນີຈຶ່ງບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໒ ປີລະ" ຄັນແລ້ວ ພິກສຸນີ

ເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລ ພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໔ ປີ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດ

**ໝາຍເຫດ :**

໑ ຍິງທີ່ຈະໄດ້ຮັບການບວຊເປັນພິກສຸນີນັ້ນ ນອກຈາກຈະຕ້ອງຜ່ານກຣະບວນການຕ່າງໆຕາມຂັ້ນຕອນແລ້ວ ຍັງຕ້ອງມີອາຍຸຄົບ ໒໐ ປີ ແຕ່ໃນກໍຣະນີນີ້ ເປັນຂໍ້ຍົກເວັ້ນສຳລັບຍິງທີ່ມີຄອບຄົວແລ້ວຫລືເຄີຍຜ່ານການແຕ່ງງານມີຄອບຄົວມາແລ້ວ ແມ່ນທ່ານຈະມີອາຍຸພຽງ ໑໔ ປີ ຖ້າຜ່ານການສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີ ແລະສົງຊ໌ໃຫ້ການສົມມຸດຕິຮັບຮອງແລ້ວ ກໍສາມາດບວຊເປັນພິກສຸນີໄດ້ (ກົງຂາ. ອ. ໖ລກູ-໔໐໐)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ກ. ຄັພພິນີວັຄ ສິກຂາບົດທີ ໕ ສິກຂາບົທວິພັງຄ໌

ພວກພິກສຸນີຈຶ່ງບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໔ ປີລະ ພິກສຸທັງຫລາຍ ເພາະວ່າຍິງອາຍຸຕ່ຳກວ່າ ໑໔ ປີ ຍັງບໍ່ອົດທົນ ບໍ່ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນຄວາມຫິວ ຄວາມຫິວສັມຜັສຈາກເຫລືອບ ຍຸງ ລົມ ແດດ ສັຕວ໌ເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍ ທີ່ເກີດຂຶ້ນເປັນທຸກຂ໌ ແສນສາຫັສ ຮຸນແຮງເຜັດຮ້ອນ ທີ່ບໍ່ນ່າຍິນດີ ບໍ່ຫນ້າພໍໃຈ ເກືອບຈະລ້າງຜານຊີວິຕ ພິກສຸທັງຫລາຍ ການກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໐໙໑] ກໍພິກສຸນີໃດບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໔ ປີ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໐໙໔] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ອາຍຸຕ່ຳກວ່າ ໑໔ ປີ ຄື ອາຍຸບໍ່ເຖິງ ໑໔ ປີ

ທີ່ຊື່ວ່າ ຍິງທີ່ມີຄອບຄົວ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຍິງທີ່ເຄີຍຢູ່ຮ່ວມກັບຊາຍ

ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້

ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໒ ຄັ້ງ ຕ້ອງອາບັຕິທຸກກະຕະ ໒ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຊາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ໕ ອນາປັຕຕິວາຣ**

**ບົທພາຊນີຍ໌**

[໑໐໙໖] ຍິງອາຍຸຕ່ຳກວ່າ ໑໔ ປີ ພິກສຸນີສຳຄັນວ່າມີອາຍຸຕ່ຳກວ່າ ໑໔ ປີ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

ຍິງອາຍຸຕ່ຳກວ່າ ໑໔ ປີ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ຍິງອາຍຸຕ່ຳກວ່າ ໑໔ ປີ ພິກສຸນີສຳຄັນວ່າຄົບ ບວຊໃຫ້ ບໍ່ຕ້ອງອາບັຕິ

ຍິງອາຍຸຄົບ ໑໔ ປີ ພິກສຸນີສຳຄັນວ່າມີອາຍຸຕ່ຳກວ່າ ໑໔ ປີ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ຍິງອາຍຸຄົບ ໑໔ ປີ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ຍິງມີອາຍຸຕ່ຳກວ່າ ໑໔ ປີ ພິກສຸນີສຳຄັນວ່າຄົບ ບວຊໃຫ້ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໐໘໔] ໑. ຍິງມີອາຍຸຕໍ່າກວ່າ ໑໘ ປີ ພິກສຸນີສໍາຄັນວ່າອາຍຸຄົບ ຈຶ່ງບວຊໃຫ້

໒. ຍິງມີອາຍຸຄົບ ໑໘ ປີ ພິກສຸນີສໍາຄັນວ່າອາຍຸຄົບ ຈຶ່ງບວຊໃຫ້

໓. ພິກສຸນີວິກົລຈິຕ

໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໖ ນິທານວັຕຖຸ**

**໗. ຄັພພິນີວັຄ**

**ສິກຂາບົດທີ ໖**

ວ່າດ້ວຍການບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໒ ປີ ແຕ່ຍັງບໍ່ໄດ້ສຶກສາສິກຂາ

**ເຣື່ອງພິກສຸນີຫລາຍຮູບ**

[໑໐໘໕] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໒ ປີ ຍັງບໍ່ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີ ຍິງທີ່ບວຊເປັນພິກສຸນີເຫລົ່ານັ້ນໂງ່ງ່າວ ບໍ່ສລາດ ບໍ່ຮູ້ສິ່ງທີ່ຄວຣຫລືບໍ່ຄວຣບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໒ ປີຍັງບໍ່ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໒ ປີ

ຍັງບໍ່ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໔ ປີ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ"ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຍັງບໍ່ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໔ ປີລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ຄັນຊົງຕຳໜິແລ້ວ ຊົງສະແດງທັມມີກຖາ ແລ້ວຮັບສັ່ງກັບພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ເຮົາອນຸຍາຕໃຫ້ພິກສຸນີສົງຊ໌ໃຫ້ສິກຂາສົມມຸດ ໃນທັມ ໖ ຂໍ້ເປັນເວລາ ໔ ປີແກ່ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ພິກສຸທັງຫລາຍ ສົງຊ໌ຄວນໃຫ້ສິກຂາສົມມຸດຢ່າງນີ້

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ໖ ນິທານວັຕຖຸ

### ວິທີຂໍສິກຂາສົມມຸດແລະກັມວາຈາໃຫ້ສິກຂາສົມມຸດ

ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີນັ້ນຄວນເຂົ້າໄປຫາສົງຊ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີທັງຫລາຍແລ້ວນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂະນ້ອຍຊື່ນີ້ ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຂອງແມ່ເຈົ້າຊື່ນີ້ ຂໍສິກຂາສົມມຸດໃນທັມ ໖ ຂໍ້ ເປັນເວລາ ໔ ປີຕໍ່ສົງຊ໌" ຄວນຂໍແມ່ນຄັ້ງທີ ໔ ຄວນຂໍແມ່ນຄັ້ງທີ ໓ ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຊ໌ຊາບດ້ວຍຍັຕຕິທຸຕິຍກັມວາຈາວ່າ

[໑໐໙໖] "ແມ່ເຈົ້າ ຂໍສົງຊ໌ຈົ່ງຟັງຂ້າພະເຈົ້າ ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຂອງແມ່ເຈົ້າຊື່ນີ້ ຂໍສິກຂາສົມມຸດໃນທັມ ໖ ຂໍ້ ເປັນເວລາ ໔ ປີ ຕໍ່ສົງຊ໌ ຖ້າສົງຊ໌ພ້ອມກັນແລ້ວຄວນໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ ເປັນເວລາ ໔ ປີ ແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຊ໌ຈົ່ງຟັງຂ້າພະເຈົ້າ ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຂອງແມ່ເຈົ້າຊື່ນີ້ ຂໍສິກຂາສົມມຸດໃນທັມ ໖ ຂໍ້ ເປັນເວລາ ໔ ປີ ຕໍ່ສົງຊ໌ ສົງຊ໌ໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ ເປັນເວລາ ໔ ປີແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ແມ່ເຈົ້າຮູບໃດເຫັນດ້ວຍກັບກາຣໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໔ ປີແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວ ມີອາຍຸຄົບ ໑໔ ປີ ແມ່ເຈົ້າຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນ

ທັກທ້ວງສິກຂາສົມມຸດໃນທ່າມ ຝ ຂໍ້ ເປັນເວລາ ໔ ປີ ສົງຊ໌ໃຫ້ແລ້ວແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ສົງຊ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້" ພິກຂຸນີຜູ້ສະລາດສາມາດຄວນບອກຍິງທີ່ມີຄອບຄົວ ມີອາຍຸຄົບ ໑໔ ປີນັ້ນວ່າ "ທ່ານຈົ່ງກ່າວຢ່າງນີ້ວ່າ

໑. ຂະນ້ອຍ ງົດເວັ້ນຈາກການຂ້າສັດ ໂດຍບໍ່ລ່ວງລະເມີດຕລອດ ໔ ປີ

ຯລຯ

ຝ. ຂະນ້ອຍຂໍສະມາທານງົດເວັ້ນຈາກການບໍຣິໂພຄອາຫານໃນເວລາວິກາລ ໂດຍບໍ່ລ່ວງລະເມີດຕລອດ ໔ ປີ"

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ຝ ສິກຂາບົທວິພັງຄ໌

ພຣະຜູ້ມີພຣະພາກຄັນຊົງຕຳຫນິພິກຂຸນີເຫລົ່ານັ້ນໂດຍປະການຕ່າງໆແລ້ວຕຣັສໂທສແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໐໙໗] ກໍພິກຂຸນີໃດບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຍັງບໍ່ໄດ້ສຶກສາສິກຂາໃນທ່າມ ຝ ຂໍ້ຕລອດ ໔ ປີ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກຂຸນີຫລາຍຮູບ ຈົບ

### ສິກຂາບົທວິພັງຄ໌

[໑໐໙໘] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . .ໃດ

ຄຳວ່າ ພິກຂຸນີ ມີອະທິບາຍວ່າ ຊື່ວ່າພິກຂຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກຂຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ມີອາຍຸຄົບ ໑໔ ປີ ຄື ມີອາຍຸເຖິງ ໑໔ ປີ

ທີ່ຊື່ວ່າ ຍິງທີ່ມີຄອບຄົວ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຍິງທີ່ເຄີຍຢູ່ຮ່ວມກັບຊາຍ

ຄຳວ່າ ຕລອດ ໔ ປີ ຄື ສິ້ນ ໔ ປີ

ທີ່ຊື່ວ່າ ຍັງບໍ່ໄດ້ສຶກສາສິກຂາ ຄື ພິກສຸນີສິງຂ໌ຍັງບໍ່ໄດ້ໃຫ້ສິກຂາ ຫລືໃຫ້ແລ້ວແຕ່ທ່ານທຳຂາດ
ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້
ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຍາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໘ ອນາປັຕຕິວາຣ

### ບົທພາຊນີຍ໌

### ຕິກປາຈິຕຕີຍ໌

[໑໐໙໙] ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ຕ້ອງອາບັຕິປາຈິຕຕີຍ໌
ກັມທີ່ທຳຖືກຕ້ອງ ພິກສຸບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

### ຕິກທຸກກະຕະ

ກັມທີ່ທຳບໍ່ຖືກຕ້ອງ ພິກສຸສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໑໐໐] ໑. ພິກສຸນີບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີແລ້ວ
໔. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕໘ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໗ ນິທານວັຕຖຸ

## ໗. ຄັພພິນີວັຄ

**ສິກຂາບົດທີ ໗**

ວ່າດ້ວຍການບວຊໃຫ້ຍິງທີ່ມີຄອບຄົວຊຶ່ງສົງຄ໌ຍັງບໍ່ໄດ້ສົມມຸດ

**ເຣື່ອງພິກສຸນີຫລາຍຮູບ**

[໑໑໐໑] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຜູ້ສຶກສາສິກຂາໃນທັມ ໕ ຂໍ້ຕລອດ ໔ ປີ ແຕ່ສົງຄ໌ຍັງບໍ່ໄດ້ສົມມຸດພິກສຸນີທັງຫລາຍກ່າວວ່າ "ສິກຂມານາທັງຫລາຍ ພວກທ່ານຈົ່ງມານີ້ ຈົ່ງຮູ້ສິ່ງນີ້ ປະເຄນສິ່ງນີ້ນຳສິ່ງນີ້ມາ ສົນຕ້ອງການສິ່ງນີ້ ຈົ່ງທຳສິ່ງນີ້ໃຫ້ເປັນກັປປີຍະ" ສິກຂມານາເຫລົ່ານັ້ນຕອບວ່າ "ແມ່ເຈົ້າ ພວກຂະນ້ອຍບໍ່ແມ່ນສິກຂມານາ ພວກຂະນ້ອຍເປັນພິກສຸນີ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພວກພິກສຸນີບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ສຶກສາສິກຂາໃນທັມ ໕ ຂໍ້ຕລອດ ໔ ປີແຕ່ສົງຄ໌ຍັງບໍ່ໄດ້ສົມມຸດລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວຊໃຫ້ຍິງທີ່ມີຄອບຄົວ ມີອາຍຸຄົບ ໑໔ ປີຜູ້ສຶກສາສິກຂາໃນທັມ ໕ ຂໍ້ຕລອດ ໔ ປີແຕ່ສົງຄ໌ຍັງບໍ່ໄດ້ສົມມຸດ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ສຶກສາສິກຂາໃນທັມ ໕ ຂໍ້ ຕລອດ໑໔ ປີແຕ່ສົງຄ໌ຍັງບໍ່ໄດ້ສົມມຸດລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້

ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ ໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ຄັນຊົງຕຳຫນິແລ້ວ ຊົງສະແດງທັມມິກະຖາແລ້ວຮັບສັ່ງກັບພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ເຮົາອນຸຍາດໃຫ້ພິກສຸນີສົງຂ໌ໃຫ້ອຸຕຖານສິມມຸດແກ່ຍິງທີ່ມີຄອບຄົວມີອາຍຸ ໑໔ ປີຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ ຕລອດ ໔ ປີແລ້ວພິກສຸທັງຫລາຍ ສົງຂ໌ຄວນໃຫ້ອຸຕຖານສິມມຸດຢ່າງນີ້

**ວິທີຂໍສິກຂາສິມມຸດແລະກັມວາຈາໃຫ້ອຸຕຖານສິມມຸດ**

ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີ ແລ້ວນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີທັງຫລາຍນັ່ງຄຸເຂົ່າປະນົມມື ກ່າວວ່າ "ແມ່ເຈົ້າ ຂະນ້ອຍຊື່ນີ້ເປັນຍິງທີ່ມີຄອບຄົວຂອງແມ່ເຈົ້າຊື່ນີ້ ມີອາຍຸຄົບ ໑໔ ປີ ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ຂໍອຸຕຖານສິມມຸດຕໍ່ສົງຂ໌" ຄວນຂໍແມ່ນຄັ້ງທີ ໒ ຄວນຂໍ ແມ່ນຄັ້ງທີ ໓ ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຂ໌ຊາບດ້ວຍຍັຕຕິທຸຕິຍກັມວາຈາວ່າ

[໑໑໐໔] "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຍິງຊື່ນີ້ເປັນຍິງທີ່ມີຄອບຄົວຂອງແມ່ເຈົ້າຊື່ນີ້ ມີອາຍຸຄົບ ໑໔ ປີ ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ຂໍອຸຕຖານສິມມຸດຕໍ່ສົງຂ໌ ຖ້າສົງຂ໌ພ້ອມກັນແລ້ວຄວນໃຫ້ອຸຕຖານສິມມຸດແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ຍິງຊື່ນີ້ເປັນຍິງທີ່ມີຄອບຄົວຂອງແມ່ເຈົ້າຊື່ນີ້ມີອາຍຸຄົບ ໑໔ ປີ ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ຂໍອຸຕຖານສິມມຸດຕໍ່ສົງຂ໌ ສົງຂ໌ໃຫ້ອຸຕຖານສິມມຸດແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີແລ້ວ ແມ່ເຈົ້າຮູບໃດເຫັນດ້ວຍກັບການໃຫ້ອຸຕຖານສິມມຸດແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ໄດ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີ ແມ່ເຈົ້າຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໗ ສິກຂາບົທວິພັງຄ໌**

ອຸຕຖານສົມມຸດສົງຂ໌ໃຫ້ແກ່ຍິງຊື່ນີ້ເປັນຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ໄດ້ສຶກສາສິກຂາໃນທັມ ຝ໌ ຂໍ້ຕລອດ ໔ ປີ ສົງຂ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້" ພຣະຜູ້ມີພຣະພາກຄັນຊົງຕຳຫນິພິກສຸນີເຫລົ່ານັ້ນໂດຍປະການຕ່າງໆແລ້ວຕຣັສໂທສແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໐໓] ກໍພິກສຸນີໃດບວຊໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີຜູ້ໄດ້ສຶກສາ ສິກຂາໃນທັມ ຝ໌ ຂໍ້ຕລອດ ໔ ປີແຕ່ສົງຂ໌ຍັງບໍ່ໄດ້ສົມມຸດ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໑໐໔] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ມີອາຍຸຄົບ ໑໔ ປີ ຄື ມີອາຍຸເຖິງ ໑໔ ປີແລ້ວ

ທີ່ຊື່ວ່າ ຍິງທີ່ມີຄອບຄົວ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຍິງທີ່ເຄີຍຢູ່ຮ່ວມກັບຊາຍ

ຄຳວ່າ ຕລອດ ໔ ປີ ຄື ສິ້ນ ໔ ປີ

ທີ່ຊື່ວ່າ ຜູ້ສຶກສາສິກຂາ ຄື ໄດ້ສຶກສາໃນທັມ ຝ໌ ຂໍ້ແລ້ວ

ທີ່ຊື່ວ່າ ຍັງບໍ່ໄດ້ສົມມຸດ ຄື ສົງຂ໌ຍັງບໍ່ໄດ້ໃຫ້ການຮັບຮອງການບວຊດ້ວຍຍັຕຕິທຸຕິຍກັມ

ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ໗ ອນາປັຕຕິວາຣ**

ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິ

ທຸກກະຕະ ໒ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຊາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໑໐໕] ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ຕ້ອງອາບັຕິປາຈິຕຕີຍ໌
ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໐໖] ໑. ພິກສຸນີບວຊໃຫ້ຍິງທີ່ມີຄອບຄົວ ມີອາຍຸຄົບ ໑໒ ປີ ຜູ້ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີແລະສົງຊ໌ສົມມຸດແລ້ວ

໒. ພິກສຸນີວິກົລຈິຕ

໓. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ໘ ພຣະບັນຍັດ**

**໗. ຄັພພິນີວັຄ**

**ສິກຂາບົດທີ ໘**

ວ່າດ້ວຍການບໍ່ອນຸເຄາະສຫຊີວິນີຕລອດ ໒ ປີ

## ເລື່ອງພິກສຸນີຖຸລລະນັນທາ

[໑໑໐໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາບວດໃຫ້ສຫຊີວິນີແລ້ວບໍ່ອນຸເຄາະ ທັງບໍ່ໃຫ້ຜູ້ອື່ນອນຸເຄາະຕລອດ ໒ ປີ ສຫຊີວິນີຜູ້ບວດເປັນພິກສຸນີເຫລົ່ານັ້ນເປັນຄົນໂງ່ງ່າວ ບໍ່ສລາດ ບໍ່ຮູ້ຈັກສິ່ງຄວຣຫລືບໍ່ຄວຣບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລະນັນທາບວດໃຫ້ສຫຊີວິນີແລ້ວບໍ່ອນຸເຄາະ ທັງບໍ່ໃຫ້ຜູ້ອື່ນ ອນຸເຄາະຕລອດ ໒ ປີລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາບວດໃຫ້ສຫຊີວິນີແລ້ວບໍ່ອນຸເຄາະ ທັງບໍ່ໃຫ້ຜູ້ອື່ນອນຸເຄາະຕລອດ ໒ ປີ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ"ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາບວດໃຫ້ສຫຊີວິນີແລ້ວບໍ່ອນຸເຄາະ ທັງບໍ່ໃຫ້ຜູ້ອື່ນອນຸເຄາະຕລອດ ໒ ປີລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໐໘] ກໍພິກສຸນີໃດບວດໃຫ້ສຫຊີວິນີແລ້ວບໍ່ອນຸເຄາະ ບໍ່ໃຫ້ອນຸເຄາະຕລອດ ໒ ປີ ຕ້ອງອາບັຕິປາຈິຕຕີຍ໌

ເລື່ອງພິກສຸນີຖຸລລະນັນທາ ຈົບ

{ທີ່ມາ : ໂປຣແກຣມພຣະໄຕຣປີດົກ ສະບັບມຫາຈຸລາລົງກອນຣາຊວິທຍາລັຍ ເຫລັ້ມ : ໓ ໜ້າ :໓໑໕ }

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໗ ອນາປັຕຕິວາຣ

### ສິກຂາບົດວິພັງຄ໌

[໑໑໐໙] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ທີ່ຊື່ວ່າ ສຫຊີວິນີ ພຣະຜູ້ມີພຣະພາກຕຣັສໝາຍເຖິງສັທຫິວິຫາຣິນີ
ຄຳວ່າ ບວຊໃຫ້ ຄື ອຸປສົມບົດໃຫ້
ຄຳວ່າ ຕລອດ ໒ ປີ ຄື ສິ້ນ ໒ ປີ
ຄຳວ່າ ບໍ່ອນຸເຄາະ ຄື ບໍ່ອນຸເຄາະເອງດ້ວຍອຸທເທສ ປຣິປຸຈສາ ໂອວາທອນຸສາສນີ
ຄຳວ່າ ບໍ່ໃຫ້ອນຸເຄາະ ຄື ບໍ່ສັ່ງພິກສຸນີອື່ນພໍທອດທຸຣະວ່າ "ຈະບໍ່ອນຸເຄາະ ຈະບໍ່ໃຫ້ຜູ້ອື່ນອນຸເຄາະຕລອດ ໒ ປີ" ຕ້ອງອາບັຕິປາຈິຕຕິຍ໌

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໑໑໐] ໑. ພິກສຸນີຜູ້ບໍ່ອນຸຄຣາະຫ໌ໃນເມື່ອມີອັນຕຣາຍ
໒. ພິກສຸນີແສວງຫາແລ້ວແຕ່ບໍ່ໄດ້໑
໓. ພິກສຸນີຜູ້ເປັນໄຂ້
໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໕. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ໝາຍເຫດ :**
໑ ບໍ່ໄດ້ພິກສຸນີຮູບອື່ນ (ວິ. ອ. ໒/໑໑໑໐/໕໑໗)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໆ. ຄັພພິນີວັຄ ສິກຂາບົດທີ ໙ ນິທານ ວັຕຖຸ

## ໆ. ຄັພພິນີວັຄ

### ສິກຂາບົດທີ ໙

ວ່າດ້ວຍການບໍ່ຕິດຕາມປວັຕຕິນີຕລອດ ໒ ປີ

### ເຣື້ອງພິກສຸນີຫລາຍຮູບ

[໑໑໑໑] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບໍ່ຕິດຕາມປວັຕຕິນີ໑ຜູ້ບວຊໃຫ້ຕລອດ ໒ ປີ ພວກທ່ານເປັນຄົນໂງ່ງ່າວ ບໍ່ສລາດ ບໍ່ຮູ້ຈັກສິ່ງຄວຣຫລືບໍ່ຄວຣ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພວກພິກສຸນີຈຶ່ງບໍ່ຕິດຕາມປວັຕຕິນີຜູ້ບວຊໃຫ້ຕລອດ ໒ ປີລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຊ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບໍ່ຕິດຕາມປວັຕຕິນີຜູ້ບວຊໃຫ້ຕລອດ ໒ ປີ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີບໍ່ຕິດຕາມປວັຕຕິນີຜູ້ບວຊໃຫ້ຕລອດ ໒ ປີລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂື້ນໄດ້ເລີຍຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ ຄຳວ່າ "ບໍ່ຕິດຕາມ" ຫມາຍເຖິງບໍ່ອຸປັຕຖາກດ້ວຍຈຸຣນະ ດິນຫນຽວ ໄມ້ຊຳຣະແຂ້ວ ນ້ຳລ້າງຫນ້າ "ປວັຕຕິນີ" ຫມາຍເຖິງພິກສຸນີຜູ້ເປັນອຸປຊຊາຍ໌ (ກງ໌ຂາ. ອ. ໓໙໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໆ. ຄັພພິນີວັຄ ສິກຂາບົດທີ ໙ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໑໑໔] ກໍພິກສຸນີໃດບໍ່ຕິດຕາມປວັຕຕິນີຜູ້ບວຊໃຫ້ຕລອດ ໒ ປີ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໑໑໕] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ຜູ້ບວຊໃຫ້ ຄື ຜູ້ອຸປສົມບົທໃຫ້

ທີ່ຮຽກວ່າ ປວັຕຕິນີ ພຣະຜູ້ມີພຣະພາກຕຣັສຫມາຍເຖິງພິກສຸນີທີ່ເປັນອຸປັຊຊາຍ໌

ຄຳວ່າ ຕລອດ ໒ ປີ ຄື ສິ້ນ ໒ ປີ

ຄຳວ່າ ບໍ່ຕິດຕາມ ຄື ບໍ່ອຸປັຕຖາກເອງ

ພໍທອດທຸຣະວ່າ “ຈະບໍ່ຕິດຕາມໄປຕລອດ ໒ ປີ” ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໑໔] ໑. ພິກສຸນີບໍ່ຕິດຕາມອຸປັຊຊາຍ໌ເປັນຄົນໂງ່ເຂົາຫລືມີຄວາມລະອາຍ

໒. ພິກສຸນີຜູ້ເປັນໄຂ້

໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໙ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ຄັພພິນີວັຄ ສິກຂາບົດທີ ໑໐ ນິທານວັຕຖຸ**

**໗. ຄັພພິນີວັຄ**

**ສິກຂາບົດທີ ໑໐**

ວ່າດ້ວຍການບໍ່ພາສຫຊີວິນີຫລີກໄປ

**ເລື້ອງພິກສຸນີຖຸລລະນັນທາ**

[໑໑໕] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາບວຊໃຫ້ສຫຊີວິນີ ແລ້ວບໍ່ພາຫລີກໄປ ທັງບໍ່ໃຫ້ຜູ້ອື່ນພາຫລີກໄປ ສາມີຈຶ່ງຈັບ(ສຫຊີວິນີນັ້ນ) ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລະນັນທາບວຊໃຫ້ສຫຊີວິນີແລ້ວບໍ່ພາຫລີກໄປ ທັງບໍ່ໃຫ້ຜູ້ອື່ນພາຫລີກໄປລະ ສາມີຈຶ່ງຈັບ(ສຫຊີວິນີ) ຖ້າພິກສຸນີນັ້ນຄອນຫລີກໄປ ສາມີກໍຈັບທ່ານບໍ່ໄດ້" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາບວຊໃຫ້ສຫຊີວິນີແລ້ວບໍ່ພາຫລີກໄປ ທັງບໍ່ໃຫ້ຜູ້ອື່ນພາຫລີກໄປ ສາມີໄດ້ຈັບ(ສຫຊີວິນີນັ້ນ) ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ"ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາບວຊໃຫ້ສຫຊີວິນີແລ້ວບໍ່ພາຫລີກໄປ ທັງບໍ່ໃຫ້ຜູ້ອື່ນພາຫລີກໄປ ຈນສາມີຈັບໄດ້ລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໖] ກໍພິກສຸນີໃດບອກໃຫ້ສຸຫຊີວິນີແລ້ວບໍ່ພາຫລີກໄປ ບໍ່ໃຫ້ພາຫລີກໄປໂດຍທີ່ສຸດແມ່ນສິ້ນຣະຍະທາງ ໕-໖ ໂຍຊນ໌ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໗. ຄັພພິນີວັຄ ສິກຂາບົດທີ ໑໐ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໑໑໗] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ฯລฯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ສຸຫຊີວິນີ ພຣະຜູ້ມີພຣະພາກຕຣັສໝາຍເຖິງສັທທິວິຫາຣີນີ

ຄຳວ່າ ບອກໃຫ້ ຄື ອຸປສົມບົທໃຫ້

ຄຳວ່າ ບໍ່ພາຫລີກໄປ ຄື ຕົນເອງບໍ່ພາຫລີກໄປ

ຄຳວ່າ ບໍ່ໃຫ້ພາຫລີກໄປ ຄື ບໍ່ສັ່ງຜູ້ອື່ນ

ພໍທອດທຸຣະວ່າ “ຈະບໍ່ພາຫລີກໄປ ທັງຈະບໍ່ໃຫ້ພາຫລີກໄປແມ່ນສິ້ນຣະຍະທາງ ໕-໖ ໂຍຊນ໌” ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໘] ໑. ພິກສຸນີບໍ່ຫລີກໄປໃນເມື່ອມີອັນຕຣາຍ

໒. ພິກສຸນີແສວງຫາແລ້ວແຕ່ບໍ່ໄດ້ພິກສຸນີເປັນເພື່ອນ

໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ
ຄັພພິນີວັຄທີ ໗ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໘. ກຸມາຣີພູຕວັຄ ສິກຂາບົດທີ ໑ ນິທານວັຕຖຸ

### ໘. ກຸມາຣີພູຕວັຄ
ຫມວດວ່າດ້ວຍກຸມາຣີ

### ສິກຂາບົດທີ ໑
ວ່າດ້ວຍການບວຊໃຫ້ກຸມາຣີອາຍຸຕ່ຳກວ່າ ໒໐ ປີ

### ເຣື່ອງພິກສຸນີຫລາຍຮູບ
[໑໑໑໙] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວຊໃຫ້ກຸມາຣີອາຍຸຕ່ຳກວ່າ ໒໐ ປີ ກຸມາຣີທີ່ບວຊເປັນພິກສຸນີເຫລົ່ານັ້ນບໍ່ອົດທົນ ບໍ່ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມຫິວ ສັມຜັສຈາກເຫລືອບ ຍຸງ ລົມ ແດດ ສັຕວ໌ເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນເປັນທຸກຂ໌ແສນສາຫັສ ຮຸນແຮງ ເຜັດຮ້ອນ ທີ່ບໍ່ນ່າຍິນດີ ບໍ່ຫນ້າພໍໃຈ ເກືອບຈະລ້າງຜານຊີວິຕບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີບວຊໃຫ້ກຸມາຣີອາຍຸຕ່ຳກວ່າ ໒໐ ປີລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ
ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວຊໃຫ້ກຸມາຣີອາຍຸຕ່ຳກວ່າ ໒໐ ປີ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງບວຊໃຫ້ກຸມາຣີອາຍຸຕ່ຳກວ່າ ໒໐ ປີລະ

ເພາະກຸມາຣີອາຍຸຕ່ຳກວ່າ ໒໐ ປີຍັງບໍ່ອົດທົນ ບໍ່ອົດກັ້ນຕໍ່ຄວາມເຢັນ ຄວາມຮ້ອນ ຄວາມຫິວ ຄວາມຫິວ ສັມຜັສຈາກເຫລືອບ ຍຸງ ລົມ ແດດ ສັຕວ໌ເລືອຄານ ຄຳກ່າວຮ້າຍ ຄຳທີ່ຟັງແລ້ວບໍ່ດີ ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໑ ສິກຂາບົທວິພັງຄ໌**

ເປັນທຸກຂ໌ ແສນສາຫັສ ຮຸນແຮງ ເຜັດຮ້ອນ ທີ່ບໍ່ນ່າຍິນດີ ບໍ່ຫນ້າພໍໃຈ ເກືອບຈະລ້າງຜານຊີວິຕ ສ່ວນຍິງສາວທີ່ມີອາຍຸຄົບ ໒໐ ປີຍ່ອມອົດທົນຕໍ່ຄວາມເຢັນ ຄວາມຮ້ອນ ຯລຯ ເກືອບຈະ ລ້າງຜານຊີວິຕ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງ ຮັບສັ່ງໃຫ້ພິກສຸນີທັງຫລາຍ ຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໒໐] ກໍພິກສຸນີໃດບວຊໃຫ້ກຸມາຣີມີອາຍຸຕ່ຳກວ່າ ໒໐ ປີ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໑໒໑] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ມີອາຍຸຕ່ຳກວ່າ ໒໐ ປີ ຄື ມີອາຍຸຍັງບໍ່ເຖິງ ໒໐ ປີ
ທີ່ຊື່ວ່າ ກຸມາຣີ ພຣະຜູ້ມີພຣະພາກຕຣັສຫມາຍເຖິງສາມເນຣີ
ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້
ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດ ສີມາ ຕ້ອງອາບັຕິປາຈິຕຕິຍ໌ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໓ ຄັ້ງ ຕ້ອງອາບັຕິ ທຸກກະຕະ ໓ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຍາຍ໌ ຕ້ອງອາບັຕິປາຈິຕຕິຍ໌ ຄນະ

ແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໑ ອນາປັຕຕິວາຣ

**ບົທພາຊນີຍ໌**

[໑໑໔໔] ກຸມາຣີອາຍຸຕ່ຳກວ່າ ໒໐ ປີ ພິກສຸນີສຳຄັນວ່າອາຍຸຕ່ຳ ໒໐ ປີ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

ກຸມາຣີອາຍຸຕ່ຳກວ່າ ໒໐ ປີ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ກຸມາຣີອາຍຸຕ່ຳກວ່າ ໒໐ ປີ ພິກສຸນີສຳຄັນວ່າຄົບ ບວຊໃຫ້ ບໍ່ຕ້ອງອາບັຕິ

ກຸມາຣີອາຍຸຄົບ ໒໐ ປີ ພິກສຸນີສຳຄັນວ່າອາຍຸຕ່ຳກວ່າ ໒໐ ປີ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ກຸມາຣີອາຍຸຄົບ ໒໐ ປີ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ກຸມາຣີອາຍຸຄົບ ໒໐ ປີ ພິກສຸສຳຄັນວ່າອາຍຸຄົບ ໒໐ ປີ ບວຊໃຫ້ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໔໕] ໑. ກຸມາຣີອາຍຸຕ່ຳກວ່າ ໒໐ ປີ ພິກສຸນີສຳຄັນວ່າອາຍຸຄົບ ໒໐ ປີ ຈຶ່ງບວຊໃຫ້

໒. ກຸມາຣີອາຍຸຄົບ ໒໐ ປີ ພິກສຸນີສຳຄັນວ່າອາຍຸຄົບ ໒໐ ປີ ຈຶ່ງບວຊໃຫ້

໓. ພິກສຸນີວິກົລຈິຕ

໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໒ ນິທານວັຕຖຸ

**໗. ກຸມາຣີພູຕວັຄ**

**ສິກຂາບົດທີ ໔**

ວ່າດ້ວຍການບວດໃຫ້ກຸມາຣີທີ່ຍັງບໍ່ໄດ້ສຶກສາໃນທັມ ໖ ຂໍ້

**ເຣື້ອງພິກສຸນີຫລາຍຮູບ**

[໑໑໘໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວດໃຫ້ກຸມາຣີມີອາຍຸຄົບ ໒໐ ປີແຕ່ຍັງບໍ່ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີ ພວກທ່ານໂງ່ງ່າວບໍ່ສລາດ ບໍ່ຮູ້ສິ່ງທີ່ຄວຣຫລືບໍ່ຄວຣ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດ ພວກພິກສຸນີຈຶ່ງບວດໃຫ້ກຸມາຣີອາຍຸຄົບ ໒໐ ປີແຕ່ຍັງບໍ່ໄດ້ສຶກສາສິກຂາໃນທັມ ໖ ຂໍ້ ຕລອດ ໒ ປີລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວດໃຫ້ກຸມາຣີອາຍຸຄົບ ໒໐ ປີແຕ່ຍັງບໍ່ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີ ແມ່ນແທ້ບໍ” ພິກສຸທັງຫລາຍທູລຮັບວ່າ “ແມ່ນແທ້ພຣະພຸດທະເຈົ້າຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ“ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງບວດໃຫ້ກຸມາຣີອາຍຸຄົບ ໒໐ ປີແຕ່ຍັງບໍ່ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ທຳ ໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ຄັນຕຳຫນິແລ້ວ ຊົງສະແດງທັມມີກຖາ ແລ້ວຮັບສັ່ງກັບພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ເຮົາອນຸຍາຕໃຫ້ພິກສຸນີສົງຊ໌ໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ ເປັນເວລາ ໒ ປີແກ່ກຸມາຣີອາຍຸ ໑໘ ປີ ພິກສຸທັງຫລາຍພິກສຸນີຄວນໃຫ້ສິກຂາສົມມຸດຢ່າງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໔ ນິທານວັຕຖຸ**

**ວິທີຂໍສິກຂາສົມມຸດແລະກັມວາຈາໃຫ້ສິກຂາສົມມຸດ**

ກຸມາຣີອາຍຸ ໑໗ ປີນັ້ນຄວນເຂົ້າໄປຫາສົງຄ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີທັງຫລາຍແລ້ວນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂະນ້ອຍຊື່ນີ້ເປັນກຸມາຣີຂອງແມ່ເຈົ້າຊື່ນີ້ມີອາຍຸ ໑໗ ປີຂໍສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີ ຕໍ່ສົງຄ໌"

ຄວນຂໍແມ່ນຄັ້ງທີ ໒ ຄວນຂໍແມ້ຄັ້ງທີ ໓ ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຄ໌ຊາບດ້ວຍຍັຕຕິທຸຕິຍກັມວາຈາວ່າ

[໑໑໒໕] "ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ກຸມາຣີຊື່ນີ້ຂອງແມ່ເຈົ້າຊື່ນີ້ມີອາຍຸ ໑໗ ປີຂໍສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີຕໍ່ສົງຄ໌ ຖ້າສົງຄ໌ພ້ອມແລ້ວຄວນໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີແກ່ຍິງສາວຜູ້ມີອາຍຸ ໑໗ ປີ ນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ກຸມາຣີນີ້ຊື່ນີ້ຂອງແມ່ເຈົ້າຊື່ນີ້ມີອາຍຸ ໑໗ ປີຂໍສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີຕໍ່ສົງຄ໌ ສົງຄ໌ໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີແກ່ກຸມາຣີຊື່ນີ້ມີອາຍຸ ໑໗ ປີ ແມ່ເຈົ້າຮູບໃດເຫັນດ້ວຍກັບການໃຫ້ສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີແກ່ກຸມາຣີຊື່ນີ້ມີອາຍຸ ໑໗ ປີ ແມ່ເຈົ້າຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງສິກຂາສົມມຸດໃນທັມ ໖ ຂໍ້ເປັນເວລາ ໒ ປີ ສົງຄ໌ໃຫ້ແລ້ວແກ່ກຸມາຣີຊື່ນີ້ມີອາຍຸ ໑໗ ປີ ສົງຄ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້" ຄວນບອກກຸມາຣີມີອາຍຸ ໑໗ ປີນັ້ນວ່າ "ທ່ານຈົ່ງ ກ່າວ ຢ່າງນີ້ວ່າ

໑. ຂະນ້ອຍຂໍສມາທານງົດເວັ້ນຈາກການຂ້າສັຕວ໌ ໂດຍບໍ່ລ່ວງລະເມີດຕລອດ ໒ ປີ

໒. ຂະນ້ອຍຂໍສມາທານງົດເວັ້ນຈາກການຖືເອົາຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍບໍ່ລ່ວງລະເມີດຕລອດ ໒ ປີ

໓. ຂະນ້ອຍຂໍສມາທານງົດເວັ້ນຈາກພຣຶຕິກັມອັນບໍ່ແມ່ນພຣົມຈັນຍ໌ ໂດຍບໍ່ລ່ວງລະເມີດຕລອດ ໒ ປີ

໔. ຂະນ້ອຍຂໍສມາທານງົດເວັ້ນຈາກການເວົ້າເທັຈ ໂດຍບໍ່ລ່ວງລະເມີດຕລອດ ໒ ປີ

໕. ຂະນ້ອຍຂໍສມາທານງົດເວັ້ນຈາກນ້ຳເມົາຄືສຸຣາແລະເມຣັຍອັນເປັນທີ່ຕັ້ງແຫ່ງຄວາມປມາດ ໂດຍບໍ່ລ່ວງລະເມີດຕລອດ ໒ ປີ

໖. ຂະນ້ອຍຂໍສມາທານງົດເວັ້ນຈາກການບໍຣິໂພຄອາຫານໃນເວລາວິການ ໂດຍບໍ່ລ່ວງລະເມີດຕລອດ ໒ ປີ"

ພຣະຜູ້ມີພຣະພາກຄັນຊົງຕຳໜິພິກສຸນີເຫລົ່ານັ້ນໂດຍປະການຕ່າງໆແລ້ວຕຣັສໂທສແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໔ຝ] ກໍພິກສຸນີໃດບວຊໃຫ້ກຸມາຣີຜູ້ມີອາຍຸຄົບ ໔໐ ປີຜູ້ຍັງບໍ່ໄດ້ສຶກສາສິກຂາໃນທັມ ຝັ ຂໍ້ຕລອດ ໔ ປີ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໑໔ກ] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ທີ່ຊື່ວ່າ ອາຍຸຄົບ ໔໐ ປີ ຄື ມີອາຍຸເຖິງ ໔໐ ປີ
ທີ່ຊື່ວ່າ ກຸມາຣີ ພຣະຜູ້ມີພຣະພາກຕຣັສໝາຍເຖິງສາມເນຣີ
ຄຳວ່າ ຕລອດ ໔ ປີ ຄື ສິ້ນ ໔ ປີ
ທີ່ຊື່ວ່າ ຜູ້ຍັງບໍ່ໄດ້ສຶກສາສິກຂາ ຄື ພິກສຸນີສົງຂ໌ຍັງບໍ່ໄດ້ໃຫ້ສິກຂາ ຫລືໃຫ້ແລ້ວແຕ່ທ່ານທຳຂາດຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຍາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໑໔ຖ] ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ຕ້ອງອາບັຕິປາຈິຕຕີຍ໌
ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໔໙] ໑. ພິກສຸນີບວຊໃຫ້ກຸມາຣີອາຍຸຄົບ ໒໐ ປີຜູ້ສິກສາຫຼັມ ຝ ຂໍ້ຕລອດ ໒ ປີ

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໕ ນິທານວັຕຖຸ**

**໗. ກຸມາຣີພູຕວັຄ**

**ສິກຂາບົດທີ ໕**

ວ່າດ້ວຍການບວຊໃຫ້ກຸມາຣີທີ່ສິງຂ໌ຍັງບໍ່ໄດ້ສົມມຸດ

**ເຣື່ອງພິກສຸນີຫລາຍຮູບ**

[໑໑໕໐] ສະມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວຊໃຫ້ກຸມາຣີມີອາຍຸຄົບ ໒໐ ປີຜູ້ໄດ້ສິກສາສິກຂາໃນຫຼັມ ຝ ຂໍ້ຕລອດ ໒ ປີແຕ່ສິງຂ໌ຍັງບໍ່ໄດ້ສົມມຸດພິກສຸນີທັງຫລາຍກ່າວວ່າ "ສິກຂມານາທັງຫລາຍ ພວກທ່ານຈົ່ງມານີ້ ຈົ່ງຮູ້ສິ່ງນີ້ ປະເຄນສິ່ງນີ້ ນຳສິ່ງນີ້ມາ ສົນຕ້ອງການສິ່ງນີ້ ຈົ່ງທຳສິ່ງນີ້ໃຫ້ເປັນກັປປິຍະ" ກຸມາຣີເຫລົ່ານັ້ນກ່າວວ່າ "ແມ່ເຈົ້າ ພວກຂະນ້ອຍບໍ່ແມ່ນສິກຂມານາ ພວກຂະນ້ອຍເປັນພິກສຸນີ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພວກພິກສຸນີຈຶ່ງບວຊໃຫ້ກຸມາຣີມີອາຍຸຄົບ ໒໐ ປີຜູ້ໄດ້ສິກສາສິກຂາໃນຫຼັມ ຝ ຂໍ້ຕລອດ

໔ ປີແຕ່ສົງຄ໌ຍັງບໍ່ໄດ້ສົມມຸດລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວຊໃຫ້ກຸມາຣີມີອາຍຸຄົບ ៤໐ ປີ ຜູ້ໄດ້ສຶກສາສິກຂາໃນທັມ ៦ ຂໍ້ຕລອດ ໔ ປີແຕ່ສົງຄ໌ຍັງບໍ່ໄດ້ສົມມຸດ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງບວຊໃຫ້ກຸມາຣີມີອາຍຸຄົບ ៤໐ ປີຜູ້ໄດ້ສຶກສາສິກຂາໃນທັມ ៦ ຂໍ້ຕລອດ ໔ ປີແຕ່ສົງຄ໌ຍັງບໍ່ໄດ້ສົມມຸດລະ ພິກສຸທັງຫລາຍກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ຄັນຕຳໜິແລ້ວ ຊົງສະແດງທັມມິກຖາ ແລ້ວຮັບສັ່ງກັບພິກສຸທັງຫລາຍວ່າ "ພິກສຸທັງຫລາຍເຮົາອນຸຍາຕໃຫ້ພິກສຸນີສົງຄ໌ໃຫ້ອຸຕຖານສົມມຸດແກ່ ກຸມາຣີມີອາຍຸ ៤໐ ປີຜູ້ໄດ້ສຶກສາສິກຂາໃນທັມ ៦ ຂໍ້ຕລອດ ໔ ປີ ພິກສຸທັງຫລາຍ ສົງຄ໌ຄວນໃຫ້ອຸຕຖານສົມມຸດຢ່າງນີ້

**ວິທີໃຫ້ອຸຕຖານສົມມຸດແລະກັມວາຈາໃຫ້ອຸຕຖານສົມມຸດ**

ກຸມາຣີມີອາຍຸ ៤໐ ປີຜູ້ໄດ້ສຶກສາສິກຂາໃນທັມ ៦ ຂໍ້ຕລອດ ໔ ປີແລ້ວນັ້ນຄວນເຂົ້າໄປຫາສົງຄ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີທັງຫລາຍແລ້ວນັ່ງກຣະໂຫຍ່ງ ປະນົມມື ກ່າວຢ່າງນີ້ວ່າ "ແມ່ເຈົ້າ ຂະນ້ອຍຊື່ນີ້ເປັນກຸມາຣີຂອງແມ່ເຈົ້າຊື່ນີ້ ມີອາຍຸຄົບ ៤໐ ປີ ໄດ້ສຶກສາໃນທັມ ៦ ຂໍ້ຕລອດ ໔ ປີແລ້ວ ຂໍອຸຕຖານສົມມຸດຕໍ່ສົງຄ໌" ຄວນຂໍແມ່ນຄັ້ງທີ ໔ ຄວນຂໍແມ່ນຄັ້ງທີ ៣ ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຄ໌ຊາບດ້ວຍຍັຕຕິທຸຕິຍກັມວາຈາວ່າ

[໑໑៣໑] "ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ກຸມາຣີຊື່ນີ້ຂອງແມ່ເຈົ້າຊື່ນີ້ມີອາຍຸຄົບ ៤໐ ປີໄດ້ສຶກສາສິກຂາໃນທັມ ៦ ຂໍ້ຕລອດ ໔ ປີ ຂໍອຸຕຖານສົມມຸດຕໍ່ສົງຄ໌ ຖ້າສົງຄ໌ພ້ອມແລ້ວ ຄວນໃຫ້ອຸຕຖານສົມມຸດແກ່ກຸມາຣີຊື່ນີ້ຜູ້ມີອາຍຸຄົບ ៤໐ ປີຜູ້ໄດ້ສຶກສາສິກຂາໃນທັມ ៦ ຂໍ້ຕລອດ ໔ ປີ ນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຄ໌ຈົ່ງຟັງຂ້າພະເຈົ້າ ກຸມາຣີຊື່ນີ້ຂອງແມ່ເຈົ້າຊື່ນີ້ມີອາຍຸຄົບ ៤໐ ປີ ໄດ້ສຶກສາສິກຂາໃນທັມ ៦ ຂໍ້ຕລອດ ໔ ປີແລ້ວ ຂອອຸຕຖານສົມມຸດຕໍ່ສົງຄ໌ ສົງຄ໌ໃຫ້ອຸຕຖານສົມມຸດແກ່ກຸມາຣີຊື່ນີ້ຜູ້ມີອາຍຸຄົບ ៤໐ ປີຜູ້ໄດ້ສຶກສາສິກຂາໃນທັມ ៦ ຂໍ້ຕລອດ໔ ປີແລ້ວ ແມ່ເຈົ້າຮູບໃດເຫັນດ້ວຍກັບ

ກາຣໃຫ້ອຸຕຖານສົມມຸດແກ່ກຸມາຣີຊື່ນີ້ຜູ້ມີອາຍຸຄົບ ໒໐ ປີຜູ້ໄດ້ສຶກສາສິກຂາໃນທຳມ ໒ ຂໍ້ຕລອດ ໒ ປີແລ້ວ ແມ່ເຈົ້າຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງອຸຕຖານສົມມຸດສົງຊ໌ໃຫ້ແລ້ວແກ່ກຸມາຣີຊື່ນີ້ມີອາຍຸຄົບ ໒໐ ປີຜູ້ໄດ້ສຶກສາສິກຂາໃນທຳມ ໒ ຂໍ້ຕລອດ ໒ ປີແລ້ວ ສົງຊ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້”

## ພຣະວິນັຍປີດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໓ ນິທານວັຕຖຸ

ພຣະຜູ້ມີພຣະພາກຄັນຊົງຕຳຫນິພິກສຸນີເຫລົ່ານັ້ນໂດຍປະກາຣຕ່າງໆແລ້ວຕຣັສໂທສແຫ່ງຄວາມເປັນຜູ້ລ້ຽງຍາກ ຯລຯ ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໓໔] ກໍພິກສຸນີໃດບວຊໃຫ້ກຸມາຣີມີອາຍຸຄົບ ໒໐ ປີ ຜູ້ໄດ້ສຶກສາສິກຂາໃນທຳມ ໒ ຂໍ້ຕລອດ ໒ ປີແລ້ວແຕ່ສົງຊ໌ຍັງບໍ່ໄດ້ສົມມຸດ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໑໓໓] ຄຳວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ມີອາຍຸຄົບ ໒໐ ປີ ຄື ມີອາຍຸເຖິງ ໒໐ ປີ

ທີ່ຊື່ວ່າ ກຸມາຣີ ພຣະຜູ້ມີພຣະພາກຕຣັສຫມາຍເຖິງສາມເນຣີ

ຄຳວ່າ ຕລອດ ໒ ປີ ຄື ສິ້ນ ໒ ປີ

ທີ່ຊື່ວ່າ ຜູ້ໄດ້ສຶກສາສິກຂາ ຄື ຜູ້ໄດ້ສຶກສາສິກຂາໃນທຳມ ໒ ຂໍ້ແລ້ວ

ທີ່ຊື່ວ່າ ສົງຊ໌ຍັງບໍ່ໄດ້ສົມມຸດ ຄື ສົງຊ໌ຍັງບໍ່ໄດ້ໃຫ້ອຸຕຖານສົມມຸດດ້ວຍຍັຕຕິທຸຕິຍກັມ

ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້

ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສີມມຸດ ສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິ ທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຊາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະ ແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໖ ອນາ ປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໑໖໔] ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິ ປາຈິຕຕີຍ໌

ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິປາຈິຕຕີຍ໌

**ຕິກທຸກກະຕະ**

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໖໕] ໑. ພິກສຸນີບວຊໃຫ້ກຸມາຣີອາຍຸຄົບ ໒໐ ປີ ຜູ້ໄດ້ສຶກສາສິກຂາໃນທັມ ໖ ຂໍ້ ຕລອດ ໒ ປີທີ່ສົງຂ໌ສົມມຸດແລ້ວ

໔. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບທີ ໓ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໔ ນິທານວັຕຖຸ

### ໗. ກຸມາຣີພູຕວັຄ

### ສິກຂາບົດທີ ໔

ວ່າດ້ວຍພິກສຸນີມີພັນສາຕ່ຳກວ່າ ໑໔ ເປັນປວັຕຕິນີ

### ເຣື້ອງພິກສຸນີຫລາຍຮູບ

[໑໑໓໘] ສະໄມນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍມີພັນສາຕ່ຳກວ່າ໑໔໑ ບວຊໃຫ້ກຸລທິດາພວກທ່ານເປັນຜູ້ໂງ່ງ່າວ ບໍ່ສລາດ ບໍ່ຮູ້ສິ່ງທີ່ຄວຣຫລືບໍ່ຄວຣ ແມ່ນພວກສັທທິວິຫາຣີນີກໍເປັນຜູ້ໂງ່ງ່າວ ບໍ່ສລາດ ບໍ່ຮູ້ສິ່ງທີ່ຄວຣຫລືບໍ່ຄວຣບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດ ພວກພິກສຸນີມີພັນສາຕ່ຳກວ່າ ໑໔ ຈຶ່ງບວຊໃຫ້ກຸລທິດາລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີມີພັນສາຕ່ຳກວ່າ ໑໔ ບວຊໃຫ້ກຸລທິດາແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີມີພັນສາຕ່ຳກວ່າ ໑໔ ຈຶ່ງບວຊໃຫ້ກຸລທິດາລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ ມີພັນສາຕ່ຳກວ່າ ໑໔ ຫມາຍເຖິງບວຊເປັນພິກສຸນີຍັງບໍ່ຄົບ ໑໔ ພັນສາ (ກງຊາ. ອ. ໔໐໐)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໑໖໗] ກໍພິກສຸນີໃດມີພັນສາຕ່ຳກວ່າ ໑໔ ບວຊໃຫ້ກຸລທິດາ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໑໖໘] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້ທີ່ຊື່ວ່າ ມີພັນສາຕ່ຳກວ່າ ໑໔ ຄື ພັນສາຍັງບໍ່ເຖິງ ໑໔
ຄຳວ່າ ບວຊໃຫ້ກຸລທິດາ ຄື ອຸປສົມບົທໃຫ້ກຸລທິດາ
ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຍາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໑໖໙] ໑. ພິກສຸນີມີພັນສາຄົບ ໑໔ ບວຊໃຫ້ກຸລທິດາ
໔. ພິກສຸນີວິກົລຈິຕ
໖. ພິກສຸນີຕົ້ນບັນຍັດ

ສິກຂາບທີ ໔ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໕ ນິທານວັຕຖຸ

### ໗. ກຸມາຣີພູຕວັຄ

### ສິກຂາບົດທີ ໕

ວ່າດ້ວຍພິກສຸນີມີພັນສາຄົບ ໑໔ ເປັນປວັຕຕິນີແຕ່ສົງຂ໌ຍັງບໍ່ໄດ້ສົມມຸດ

### ເຣື້ອງພິກສຸນີຫລາຍຮູບ

[໑໑໔໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍມີພັນສາຄົບ ໑໔ ແລ້ວແຕ່ສົງຂ໌ຍັງບໍ່ໄດ້ສົມມຸດບອຊໃຫ້ກຸລທິດາ ພວກທ່ານເປັນຜູ້ໂງ່ງ່າວ ບໍ່ສລາດ ບໍ່ຮູ້ສິ່ງທີ່ຄວຣຫລືບໍ່ຄວຣ ແມ່ນສັທທິວິຫາຣີນີກໍເປັນຜູ້ໂງ່ງ່າວ ບໍ່ສລາດ ບໍ່ຮູ້ສິ່ງທີ່ຄວຣຫລືບໍ່ຄວຣ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີມີພັນສາຄົບ ໑໔ ແລ້ວແຕ່ສົງຂ໌ຍັງບໍ່ໄດ້ສົມມຸດຈຶ່ງບອຊໃຫ້ກຸລທິດາລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີມີພັນສາຄົບ ໑໔ ແລ້ວແຕ່ສົງຂ໌ຍັງບໍ່ໄດ້ສົມມຸດບອຊໃຫ້ກຸລທິດາ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ຈິງພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີມີພັນສາຄົບ ໑໔ ແຕ່ສົງຂ໌ຍັງບໍ່ໄດ້ສົມມຸດ ຈຶ່ງບອຊໃຫ້ກຸລທິດາລະ ພິກສຸທັງຫລາຍກາຣກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ຄັນຊົງຕຳຫນິແລ້ວໄດ້ຊົງສະແດງທັມມີກຖາແລ້ວຮັບສັ່ງກັບພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ເຮົາອນຸຍາຕອຸຕຖາປນສົມມຸດ໑ແກ່ພິກສຸນີຜູ້ມີພັນສາຄົບ ໑໔ ແລ້ວພິກສຸທັງຫລາຍ ສົງຂ໌ຄວນໃຫ້ອຸຕຖາປນສົມມຸດຢ່າງນີ້

**ໝາຍເຫດ :**
໑ "ອຸຕຖາປນສົມມຸດ" ແປວ່າ ສົມມຸດໃຫ້ເປັນຜູ້ບວຊໃຫ້ກຸລທິດາ ຄືກາຣແຕ່ງຕັ້ງໃຫ້ທຳຫນ້າທີ່ເປັນອຸປັຊຊາຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໕ ນິທານວັຕຖຸ**

**ວິທີຂໍອຸຕຖາປນສົມມຸດແລະກັມວາຈາໃຫ້ອຸຕຖາປນສົມມຸດ**
ພິກສຸນີຜູ້ມີພັນສາຄົບ ໑໔ ນັ້ນຄວນເຂົ້າໄປຫາສົງຂ໌ ຫົ່ມອຸຕຕຣາສົງຄ໌ບ່ຽງບ່າຂ້າງນຶ່ງ ຂາບຕີນພິກສຸນີຜູ້ແກ່ພັນສາແລ້ວນັ່ງຄຸເຂົ່າ ປະນົມມື ກ່າວຢ່າງນີ້ວ່າ"ແມ່ເຈົ້າ ຂະນ້ອຍມີຊື່ນີ້ມີພັນສາຄົບ ໑໔ ແລ້ວ ຂອອຸຕຖາປນສົມມຸດຕໍ່ສົງຂ໌" ຄວນຂໍແມ່ນຄັ້ງທີ ໔ ຄວນຂໍແມ່ນຄັ້ງທີ ໓ ພິກສຸນີນັ້ນສົງຂ໌ຄວນກຳຫນົດໄດ້ວ່າ "ພິກສຸນີນີ້ເປັນຄົນສລາດ ມີຄວາມລະອາຍ" ຖ້າທ່ານເຂລາ ບໍ່ມີຄວາມລະອາຍ ກໍບໍ່ຄວຣໃຫ້ອຸຕຖາປນສົມມຸດ ຖ້າທ່ານເຂລາແຕ່ມີຄວາມລະອາຍກໍບໍ່ຄວຣໃຫ້ ຖ້າເປັນຄົນສລາດແຕ່ບໍ່ມີຄວາມລະອາຍກໍບໍ່ຄວຣໃຫ້ ແຕ່ຖ້າເປັນທັງຄົນສລາດແລະມີຄວາມລະອາຍຈຶ່ງຄວຣໃຫ້
ພິກສຸທັງຫລາຍ ສົງຂ໌ຄວນໃຫ້ອຸຕຖາປນສົມມຸດຢ່າງນີ້ພິກສຸນີຜູ້ສລາດສາມາດຄວນປະກາດໃຫ້ສົງຂ໌ຊາບດ້ວຍຍັຕຕິທຸຕິຍກັມວາຈາວ່າ

[໑໑໔໑] "ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີນີ້ມີພັນສາຄົບ ໑໔ ແລ້ວຂໍອຸຕຖາປນສົມມຸດຕໍ່ສົງຂ໌ ຖ້າສົງຂ໌ພ້ອມແລ້ວຄວນໃຫ້ອຸຕຖາປນສົມມຸດແກ່ພິກສຸນີຊື່ນີ້ຜູ້ມີພັນສາຄົບ ໑໔ ແລ້ວ ນີ້ເປັນຍັຕຕິ ແມ່ເຈົ້າ ຂໍສົງຂ໌ຈົ່ງຟັງຂ້າພະເຈົ້າ ພິກສຸນີນີ້ມີພັນສາຄົບ ໑໔ ແລ້ວຂອອຸຕຖາປນສົມມຸດຕໍ່ສົງຂ໌ ສົງຂ໌ໃຫ້ອຸຕຖາປນສົມມຸດແກ່ພິກສຸນີຊື່ນີ້ຜູ້ມີພັນສາຄົບ ໑໔ ແລ້ວ ແມ່ເຈົ້າຮູບໃດເຫັນດ້ວຍກັບກາຣໃຫ້ອຸຕຖາປນສົມມຸດແກ່ພິກສຸນີຊື່ນີ້ຜູ້ມີພັນສາຄົບ ໑໔ ແລ້ວ ແມ່ເຈົ້າ ຮູບນັ້ນຄວນນິ່ງ ແມ່ເຈົ້າຮູບໃດບໍ່ເຫັນດ້ວຍ ແມ່ເຈົ້າຮູບນັ້ນຄວນທັກທ້ວງອຸຕຖາປນສົມມຸດສົງຂ໌ໃຫ້ແລ້ວແກ່ພິກສຸນີຊື່ນີ້ຜູ້ມີພັນສາຄົບ ໑໔ ແລ້ວ ສົງຂ໌ເຫັນດ້ວຍ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້" ຄັນພຣະຜູ້ມີພຣະພາກຊົງຕຳຫນິພິກສຸນີເຫລົ່ານັ້ນໂດຍປະກາຣຕ່າງໆແລ້ວຈຶ່ງ

ຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໕ ບົທພາຊນີຍ໌**

**ພຣະບັນຍັດ**

[໑໑໔໘] ກໍພິກສຸນີໃດມີພັນສາຄົບ ໑໔ ແລ້ວແຕ່ສິງຂ໌ຍັງບໍ່ໄດ້ສົມມຸດ ບວຊໃຫ້ກຸລທິດາ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໑໔໙] ຄໍາວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ມີພັນສາຄົບ ໑໔ ແລ້ວ ຄື ມີພັນສາເຖິງ ໑໔
ທີ່ຊື່ວ່າ ຍັງບໍ່ໄດ້ສົມມຸດ ຄື ສົງຂ໌ຍັງບໍ່ໄດ້ໃຫ້ວຸຕຖາປນສົມມຸດດ້ວຍຍັຕຕິທຸຕິຍກັມວາຈາ
ຄໍາວ່າ ບວຊໃຫ້ກຸລທິດາ ຄື ອຸປສົມບົທໃຫ້ກຸລທິດາ
ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໒ ຄັ້ງ ຕ້ອງອາບັຕິທຸກກະຕະ ໒ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຍາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໑໕໐] ກັມທີ່ທໍາຖືກຕ້ອງ໑ ພິກສຸນີສໍາຄັນວ່າເປັນກັມທີ່ທໍາຖືກຕ້ອງ ບວຊໃຫ້ຕ້ອງອາບັຕິປາຈິຕຕີຍ໌

**ໝາຍເຫດ :**
໑ ກັມທີ່ທຳຖືກຕ້ອງ ໝາຍເຖິງກັມອາຈາໃຫ້ອຸຕຼຖາປນສີມມຸດ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໆ. ກຸມາຣີພູຕວັຄ ສິກຂາບົດທີ ຝ ອນາປັຕຕິວາຣ

ກັມທີ່ທຳຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິປາຈິຕຕິຍ໌
ກັມທີ່ທຳຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິປາຈິຕຕິຍ໌

**ຕິກທຸກກະຕະ**
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີບໍ່ແນ່ໃຈ ບວຊໃຫ້ ຕ້ອງອາບັຕິທຸກກະຕະ
ກັມທີ່ທຳບໍ່ຖືກຕ້ອງ ພິກສຸນີສຳຄັນວ່າເປັນກັມທີ່ທຳບໍ່ຖືກຕ້ອງ ບວຊໃຫ້ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**
ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໑໔໕] ໑. ພິກສຸນີນີພັນສາຄົບ ໑໔ ແລ້ວ ແລະສົງຂ໌ສີມມຸດແລ້ວ ຈຶ່ງບວຊໃຫ້ກຸລທິດາ
໔. ພິກສຸນີວິກົລຈິຕ
๓. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໆ. ກຸມາຣີພູຕວັຄ ສິກຂາບົດທີ ຝ ນິທານວັຕຖຸ

**ໆ. ກຸມາຣີພູຕວັຄ**

**ສິກຂາບົດທີ ຝ**
ວ່າດ້ວຍການຈິ່ມວ່າພາຍຫລັງ

## ເລື່ອງພິກສຸນີຈັນທກາລີ

[໑໑໔ຜ] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຈັນທກາລີເຂົ້າໄປຫາພິກສຸນີສົງຂ໌ ຂໍ ອຸຕຖາປນສົມມຸດ ລຳດັບນັ້ນ ພິກສຸນີສົງຂ໌ກໍຫານິດພິຈາຣນາທ່ານໃນຂນະນັ້ນແລ້ວບໍ່ຍອມໃຫ້ອຸຕຖາປນສົມມຸດດ້ອຍກ່າວວ່າ "ແມ່ເຈົ້າ ທ່ານຢ່າບອຊໃຫ້ກຸລທິດາເລີຍ" ພິກສຸນີຈັນທກາລີກໍຮັບຄຳຂອງສົງຂ໌ ຄັນຕໍ່ມາ ພິກສຸນີສົງຂ໌ໃຫ້ອຸຕຖາປນສົມມຸດແກ່ພິກສຸນີເຫລົ່າອື່ນ ພິກສຸນີຈັນທກາລີຈຶ່ງຕຳໜິ ປະນາມໂພນທະນາວ່າ "ຂະນ້ອຍເທົ່ານັ້ນເປັນຄົນໂງ່ເຂົາ ຂະນ້ອຍເທົ່ານັ້ນບໍ່ມີຄວາມລະອາຍ ທີ່ເຮັດໃຫ້ສົງຂ໌ໃຫ້ອຸຕຖາປນສົມມຸດແກ່ພິກສຸນີເຫລົ່າອື່ນ ບໍ່ໃຫ້ແກ່ຂະນ້ອຍເທົ່ານັ້ນ" ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຈັນທກາລີອັນສົງຂ໌ກ່າວຢູ່ວ່າ 'ແມ່ເຈົ້າ ທ່ານຢ່າບອຊໃຫ້ກຸລທິດາເລີຍ' ຮັບຄຳແລ້ວ ພາຍຫລັງກັບຈົ່ມວ່າລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຈັນທກາລີອັນສົງຂ໌ ກ່າວຢູ່ວ່າ 'ແມ່ເຈົ້າ ທ່ານຢ່າບອຊໃຫ້ກຸລທິດາເລີຍ" ຮັບຄຳແລ້ວ ພາຍຫລັງກັບຈົ່ມວ່າ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈັນທກາລີອັນສົງຂ໌ກ່າວຢູ່ວ່າ 'ແມ່ເຈົ້າ ທ່ານຢ່າບອຊໃຫ້ກຸລທິດາເລີຍ' ຮັບຄຳແລ້ວ ພາຍຫລັງກັບຈົ່ມວ່າລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

## ພຣະບັນຍັດ

[໑໑໔ຖ] ກໍພິກສຸນີໃດອັນສົງຂ໌ກ່າວຢູ່ວ່າ "ແມ່ເຈົ້າ ທ່ານຢ່າບອຊໃຫ້ກຸລທິດາເລີຍ" ຮັບຄຳແລ້ວ ພາຍຫລັງກັບຈົ່ມວ່າ ຕ້ອງອາບັຕິປາຈິຕຕີຍ໌

ເລື່ອງພິກສຸນີຈັນທກາລີ ຈົບ

**ສິກຂາບົທວິພັງຄ໌**

[໑໑໔໗] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ແມ່ເຈົ້າ ທ່ານຢ່າບອຊໃຫ້ກຸລທິດາເລີຍ ຄວາມວ່າ ແມ່ເຈົ້າ ທ່ານຢ່າໃຫ້ກຸລທິດາ ອຸປສົມບົທເລີຍ ທ່ານຮັບຄຳແລ້ວ ພາຍຫລັງກັບຈົ່ມວ່າ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໑໔໘] ໑. ພິກສຸນີຜູ້ຈົ່ມວ່າພິກສຸນີສົງຂ໌ທີ່ມັກກະທຳໄປດ້ວຍຄວາມຊອບ ດ້ວຍຄວາມຊັງ ດ້ວຍຄວາມຫລົງ ດ້ວຍຄວາມຢ້ານ
໔. ພິກສຸນີວິກົລຈິຕ
๕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໘ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໗ ນິທານວັຕຖຸ**

**໗. ກຸມາຣີພູຕວັຄ**

**ສິກຂາບົດທີ ໗**

ວ່າດ້ວຍການບອກສິກຂມານາໃຫ້ຖວາຍຈີວອນແລ້ວບໍ່ບອຊໃຫ້

**ເຣື້ອງພິກສຸນີຖຸລລະນັນທາ**

[໑໑໕໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ສິກຂມານາຮູບນຶ່ງເຂົ້າໄປຫາພິກສຸນີຖຸລລະນັນທາ ຂໍອຸປສົມບົທພິກສຸນີຖຸລລະນັນທາກ່າວກັບສິກຂມານານັ້ນວ່າ "ແມ່ຄຸນ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນຢ່າງນີ້ ເຮົາກໍຈະບອຊໃຫ້ທ່ານ" ແລ້ວບໍ່ບອຊໃຫ້ ບໍ່ຂົນຂວາຍໃຊ້ໃຫ້ບອຊໃຫ້ ລຳດັບ

ນັ້ນ ສິກຂມານານັ້ນຈຶ່ງບອກເຣື້ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລະນັນທາຈຶ່ງກ່າວກັບສິກຂມານາວ່າ "ແມ່ຄຸນ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນຢ່າງນີ້ ເຮົາກໍຈະບວຊໃຫ້ທ່ານ' ແລ້ວບໍ່ບວຊໃຫ້ ບໍ່ຂີນຂວາຍເພື່ອບວຊໃຫ້ລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາກ່າວກັບສິກຂມານາວ່າ 'ແມ່ຄຸນ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນຢ່າງນີ້ ເຮົາກໍຈະບວຊໃຫ້ທ່ານ' ແລ້ວບໍ່ບວຊໃຫ້ ບໍ່ຂີນຂວາຍໃຊ້ໃຫ້ບວຊໃຫ້ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ຈິງພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງກ່າວກັບສິກຂມານາວ່າ 'ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນຢ່າງນີ້ເຮົາກໍຈະບວຊໃຫ້ທ່ານ' ແລ້ວບໍ່ບວຊໃຫ້ ບໍ່ຂີນຂວາຍໃຊ້ໃຫ້ບວຊໃຫ້ລະ ພິກສຸທັງຫລາຍ ກາຣກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນ ສະແດງດັ່ງນີ້

**ພຣະບັນຍັດ**

[໑໑໕໑] ກໍພິກສຸນີໃດກ່າວກັບສິກຂມານາວ່າ "ແມ່ຄຸນ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນຢ່າງນີ້ ເຮົາກໍຈະບວຊໃຫ້ທ່ານ" ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍບໍ່ບວຊໃຫ້ ບໍ່ຂີນຂວາຍໃຊ້ໃຫ້ບວຊໃຫ້ ຕ້ອງອາບັຕິປາຈິຕຕິຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໑໑໕໔] ຄໍາວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . . ໃດ

ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ສິກຂມານາ ໄດ້ແກ່ ຜູ້ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີແລ້ວ

ຄຳວ່າ ແມ່ຄຸນ ຖ້າທ່ານຈັກໃຫ້ຈີວອນແກ່ເຮົາ ເມື່ອເປັນຢ່າງນີ້ ເຮົາກໍຈະບວຊໃຫ້ທ່ານ

ຄວາມວ່າ ເມື່ອເປັນຢ່າງນີ້ ເຮົາຈະອຸປສົມບົທໃຫ້ທ່ານ

ຄຳວ່າ ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ ຄື ເມື່ອອັນຕຣາຍບໍ່ມີ

ຄຳວ່າ ບໍ່ບວຊໃຫ້ ຄື ບໍ່ບວຊໃຫ້ດ້ວຍຕົນເອງ

ຄຳວ່າ ບໍ່ຂວນຂວາຍໃຊ້ໃຫ້ບວຊໃຫ້ ຄື ບໍ່ສັ່ງພິກສຸນີຮູບອື່ນ ພໍທອດທຸຣະວ່າ "ຈະບໍ່ບວຊໃຫ້ ບໍ່ຂວນຂວາຍໃຊ້ໃຫ້ບວຊໃຫ້" ຕ້ອງອາບັຕິປາຈິຕຕີຍ໌

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໗ ອນາປັຕຕິວາຣ

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໕໓] ໑. ພິກສຸນີບໍ່ບວຊໃຫ້ໃນເມື່ອມີອັນຕຣາຍ

໒. ພິກສຸນີແສວງຫາແລ້ວແຕ່ບໍ່ໄດ້໑

໓. ພິກສຸນີຜູ້ເປັນໄຂ້

໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໕. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

**ໝາຍເຫດ :**

໑ ຫມາຍເຖິງບໍ່ໄດ້ພິກສຸນີຜູ້ເປັນອຸປັຊຊາຍ໌ຮູບອື່ນ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໘ ນິທານວັຕຖຸ

## ໗. ກຸມາຣີພູຕວັຄ

### ສິກຂາບົດທີ ໗
ວ່າດ້ວຍການບອກສິກຂມານາໃຫ້ຕິດຕາມຕລອດ ໔ ປີແລ້ວບໍ່ບວຊໃຫ້

### ເຣື່ອງພິກສຸນີຖຸລລະນັນທາ
[໑໑໕໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ສິກຂມານາຮູບນຶ່ງເຂົ້າໄປຫາພິກສຸນີຖຸລລະນັນທາ ຂໍອຸປສົມບົທພິກສຸນີຖຸລລະນັນທາໄດ້ກ່າວກັບສິກຂມານານັ້ນດັ່ງນີ້ວ່າ "ແມ່ຄຸນ ຖ້າທ່ານຈັກຕິດຕາມສັນຕລອດ ໔ ປີ ເມື່ອເປັນຢ່າງນີ້ ສັນຈະບວຊໃຫ້ທ່ານ" ແລ້ວບໍ່ບວຊໃຫ້ ບໍ່ຂົນຂວາຍໃຊ້ໃຫ້ບວຊໃຫ້ ລຳດັບນັ້ນ ສິກຂມານານັ້ນບອກເຣື່ອງນັ້ນໃຫ້ພິກສຸນີທັງຫລາຍຊາບບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລ ນັນທາເວົ້າກັບສິກຂມານາແລ້ວວ່າ 'ແມ່ຄຸນ ຖ້າທ່ານຈັກຕິດຕາມສັນຕລອດ ໔ ປີ ເມື່ອເປັນຢ່າງນີ້ ສັນຈະບວຊໃຫ້ທ່ານ' ບໍ່ບວຊໃຫ້ ທັງບໍ່ຂົນຂວາຍໃຊ້ໃຫ້ບວຊໃຫ້" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ
ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາເວົ້າກັບສິກຂມານາແລ້ວວ່າ 'ແມ່ຄຸນ ຖ້າທ່ານຈັກຕິດຕາມສັນຕລອດ ໔ ປີ ເມື່ອເປັນຢ່າງນັ້ນ ເຮົາຈະບວຊໃຫ້ທ່ານ' ແລ້ວບໍ່ບວຊໃຫ້ ທັງບໍ່ຂົນຂວາຍໃຊ້ໃຫ້ບວຊໃຫ້ ແມ່ນແທ້ບໍ່" ພວກພິກສຸທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາກ່າວກັບສິກຂມານາແລ້ວວ່າ 'ແມ່ຄຸນ ຖ້າທ່ານຈັກຕິດຕາມເຮົາຕລອດ ໔ ປີ ເມື່ອເປັນຢ່າງນັ້ນ ເຮົາຈະບວຊໃຫ້ທ່ານ' ແລ້ວບໍ່ບວຊໃຫ້ທັງບໍ່ຂົນຂວາຍໃຊ້ໃຫ້ບວຊໃຫ້ລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໕໕] ກໍພິກສຸນີໃດກ່າວກັບສິກຂະມານາວ່າ 'ແມ່ຄຸນ ຖ້າທ່ານຈັກຕິດຕາມເຮົາຕລອດ ໒ ປີ ເມື່ອເປັນຢ່າງນັ້ນ ເຮົາກໍຈະບວຊໃຫ້ທ່ານ' ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍບໍ່ບວຊໃຫ້ ບໍ່ຂົນຂວາຍໃຊ້ໃຫ້ບວຊໃຫ້ ຕ້ອງອາບັຕິປາຈິຕຕິຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໑໑໕໖] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ທີ່ຊື່ວ່າ ສິກຂະມານາ ໄດ້ແກ່ ສາມເນຣີຜູ້ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີ

ຄຳວ່າ ແມ່ຄຸນ ຖ້າທ່ານຈັກຕິດຕາມເຮົາຕລອດ ໒ ປີ ຄວາມວ່າ ທ່ານຈັກອຸປັຕຖາກເຮົາຕລອດ ໒ ປີ

ຄຳວ່າ ເມື່ອເປັນຢ່າງນີ້ ເຮົາກໍຈະບວຊໃຫ້ທ່ານ ຄວາມວ່າ ເມື່ອເປັນຢ່າງນີ້ ເຮົາຈະອຸປສົມບົທໃຫ້ທ່ານ

ຄຳວ່າ ພາຍຫລັງພິກສຸນີນັ້ນຜູ້ບໍ່ມີອັນຕຣາຍ ຄື ເມື່ອອັນຕຣາຍບໍ່ມີ

ຄຳວ່າ ບໍ່ບວຊໃຫ້ ຄື ບໍ່ບວຊໃຫ້ດ້ວຍຕົນເອງ

ຄຳວ່າ ບໍ່ຂົນຂວາຍໃຊ້ໃຫ້ບວຊໃຫ້ ຄື ບໍ່ສັ່ງພິກສຸນີຮູບອື່ນ

ພໍທອດທຸຣະວ່າ "ຈະບໍ່ບວຊໃຫ້ ຈະບໍ່ຂົນຂວາຍໃຊ້ໃຫ້ບວຊໃຫ້" ຕ້ອງອາບັຕິປາຈິຕຕິຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໗ ອນາປັຕຕິວາຣ**

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໕໗] ໑. ພິກສຸນີຜູ້ບໍ່ບວຊໃຫ້ໃນເມື່ອມີອັນຕຣາຍ

໒. ພິກສຸນີແສວງຫາແລ້ວແຕ່ບໍ່ໄດ້

໓. ພິກສຸນີຜູ້ເປັນໄຂ້
໔. ພິກສຸນີຜູ້ມີເຫດຸຂັດຂ້ອງ
໕. ພິກສຸນີວິກົລຈິດ
໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ႐ ນິທານ ວັຕຖຸ

## ໗. ກຸມາຣີພູຕວັຄ

**ສິກຂາບົດທີ ႐**

ວ່າດ້ວຍການບວຊໃຫ້ສິກຂມານາຜູ້ເກືອກກົ້ວກັບຊາຍ

### ເຣື້ອງພິກສຸນີຖຸລລະນັນທາ

[໑໑໕໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາບວຊໃຫ້ສິກຂມານາຊື່ຈັນທກາລີຜູ້ເກືອກກົ້ວກັບຊາຍ ເກືອກກົ້ວກັບເດັກ ໂຫດຮ້າຍ ຜູ້ທຳຊາຍໃຫ້ຣະທົມໂສກ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ແມ່ເຈົ້າຖຸລລະນັນທາຈຶ່ງບວຊໃຫ້ສິກຂມານາຊື່ອຈັນທກາລີຜູ້ເກືອກກົ້ວກັບຊາຍ ເກືອກກົ້ວກັບເດັກໂຫດຮ້າຍ ຜູ້ທຳຊາຍໃຫ້ຣະທົມໂສກລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫດຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາບວຊໃຫ້ສິກຂມານາຊື່ອຈັນທກາລີຜູ້ເກືອກກົ້ວກັບຊາຍ ເກືອກກົ້ວກັບເດັກ ໂຫດຮ້າຍ ຜູ້ທຳຊາຍໃຫ້ຣະທົມໂສກແມ່ນແທ້ບໍ່" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ

"ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງບອຊໃຫ້ສິກຂມານາຊື່ຈັນທກາລີຜູ້ເກືອກກົ້ວກັບຊາຍ ເກືອກກົ້ວກັບເດັກ ໂຫດຮ້າຍ ຜູ້ທຳຊາຍໃຫ້ຣະທົມໂສກລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໕໙] ກໍພິກສຸນີໃດບອຊໃຫ້ສິກຂມານາຜູ້ເກືອກກົ້ວກັບຊາຍ ເກືອກກົ້ວກັບເດັກ ໂຫດຮ້າຍ ຜູ້ທຳຊາຍໃຫ້ຣະທົມໂສກ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຖຸລລະນັນທາ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໙ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໑໑໖໐] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ຊາຍ ໄດ້ແກ່ ຊາຍຜູ້ມີອາຍຸເຖິງ ໒໐ ປີ
ທີ່ຊື່ວ່າ ເດັກ ໄດ້ແກ່ ຊາຍຜູ້ມີອາຍຸບໍ່ເຖິງ ໒໐ ປີ
ທີ່ຊື່ວ່າ ຜູ້ເກືອກກົ້ວ ຄື ເກືອກກົ້ວດ້ວຍກິຣິຍາທາງກາຍແລະວາຈາທີ່ບໍ່ເຫມາະສົມ
ທີ່ຊື່ວ່າ ໂຫດຮ້າຍ ພຣະຜູ້ມີພຣະພາກຕຣັສຫມາຍເຖິງຜູ້ມັກໂກດ
ທີ່ຊື່ວ່າ ຜູ້ທຳຊາຍໃຫ້ຣະທົມໂສກ ຄື ຜູ້ກ່ອທຸກຂ໌ ຄື ນຳຄວາມໂສກໃຫ້ແກ່ຊາຍອື່ນ
ທີ່ຊື່ວ່າ ສິກຂມານາ ໄດ້ແກ່ ສາມເນຣີຜູ້ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີ
ຄຳວ່າ ບອຊໃຫ້ ຄື ອຸປສົມບົທໃຫ້
ພິກສຸນີຕັ້ງໃຈວ່າ "ຈະບອຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລື ສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໒ ຄັ້ງ ຕ້ອງອາບັຕິ

ທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຊາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະ ແລະອາຈາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໖໑] ໑. ພິກສຸນີບໍ່ຮູ້ຈຶ່ງບວຊໃຫ້

໔. ພິກສຸນີວິກົລຈິຕ

໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໙ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໑໐ ນິທານວັຕຖຸ**

**໗. ກຸມາຣີພູຕວັຄ**

**ສິກຂາບົດທີ ໑໐**

ວ່າດ້ວຍການບວຊໃຫ້ສິກຂມານາທີ່ຍັງບໍ່ໄດ້ຮັບອນຸຍາຕ

**ເຣື້ອງພິກສຸນີຖຸລລະນັນທາ**

[໑໑໖໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຖຸລລະນັນທາບວຊໃຫ້ສິກຂມານາຜູ້ທີ່ມາຣດາບິດາແດ່ ສາມີແດ່ຍັງບໍ່ໄດ້ອນຸຍາຕ ຕໍ່ມາ ມາຣດາບິດາແດ່ສາມີແດ່ຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງບວຊໃຫ້ສິກຂມານາທີ່ພວກເຮົາຍັງບໍ່ໄດ້ອນຸຍາຕລະ" ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານີ້ຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດແມ່ເຈົ້າຖຸລລະນັນທາຈຶ່ງບວຊໃຫ້ສິກຂມານາທີ່ມາຣດາບິດາແດ່ ສາມີແດ່ຍັງບໍ່ໄດ້ອນຸຍາຕລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຂາບວ່າ ພິກສຸນີຖຸລລະນັນທາບວຊໃຫ້ສິກຂມານາທີ່ມາຣດາບິດາແດ່ ສາມີແດ່ຍັງບໍ່ໄດ້ອນຸຍາຕ ແມ່ນແທ້ບໍ" ພິກສຸທັງຫລາຍທູລຣັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຖຸລລະນັນທາຈຶ່ງບວຊໃຫ້ສິກຂມານາທີ່ມາຣດາບິດາແດ່ ສາມີແດ່ຍັງບໍ່ໄດ້ອນຸຍາຕລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໑໐ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໑໓໖] ກໍພິກສຸນີໃດບວຊໃຫ້ສິກຂມານາທີ່ມາຣດາບິດາຫລືສາມີຍັງບໍ່ໄດ້ອນຸຍາຕ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໑໑໓໔] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ທີ່ຊື່ວ່າ ມາຣດາບິດາ ພຣະຜູ້ມີພຣະພາກຕຣັສໝາຍເຖິງຜູ້ໃຫ້ກຳເນີດ
ທີ່ຊື່ວ່າ ສາມີ ໄດ້ແກ່ ຜູ້ທີ່ຄອບຄອງຍິງ
ຄຳວ່າ ຍັງບໍ່ໄດ້ອນຸຍາຕ ຄື ຍັງບໍ່ໄດ້ບອກລາ
ທີ່ຊື່ວ່າ ສິກຂມານາ ໄດ້ແກ່ ສາມເນຣີຜູ້ໄດ້ສຶກສາສິກຂາໃນທັມ ໖ ຂໍ້ຕລອດ ໒ ປີ
ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້
ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດ

ສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໒ ຄັ້ງ ຕ້ອງອາບັຕິທຸກກະຕະ ໒ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຊາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະ ແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໘໕] ໑. ພິກສຸນີບໍ່ຮູ້ຈຶ່ງບວຊໃຫ້

໒. ພິກສຸນີຂໍອນຸຍາຕກ່ອນຄ່ອຍບວຊໃຫ້

໓. ພິກສຸນີວິກົລຈິຕ

໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໐ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໑໑ ນິທານວັຕຖຸ**

**໗. ກຸມາຣີພູຕວັຄ**

**ສິກຂາບົດທີ ໑໑**

ວ່າດ້ວຍການບວຊໃຫ້ສິກຂມານາດ້ວຍການໃຫ້ປາຣິວາສິກສັນທະ

**ເຣື້ອງພິກສຸນີຖຸລລະນັນທາ**

[໑໑໘໘] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເວຣຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂຕກຸງຣາຊຄຶຫ໌ ຄັ້ງນັ້ນ ພິກສຸນີຖຸລລະນັນທານິມົນຕ໌ພິກສຸເຖຣະທັງຫລາຍໃຫ້ປະຊຸມກັນດ້ວຍກ່າວວ່າ "ຂະນ້ອຍຈັກບວຊໃຫ້ສິກຂມານາ" ຄັນເຫັນຂອງຄ້ງວຂອງເຮົາຈຳນວນຫລາຍ ຈຶ່ງນິມົນຕ໌ພຣະເຖຣະທັງຫລາຍໃຫ້ກັບໄປດ້ວຍກ່າວວ່າ "ພຣະຄຸນເຈົ້າ ຂະນ້ອຍຈະຍັງບໍ່ບວຊສິກຂມານາ" ແລ້ວນິມົນຕ໌ພຣະເທວທັຕ ພຣະໂກກາລິກະ ພຣະກຕໂມຣກາຕິສສະ ພຣະຂັນທເທວີບຸຕຣ ແລະພຣະສມຸທທທັຕຕະໃຫ້ປະຊຸມກັນບວຊໃຫ້ສິກຂມານາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດ ພິກສຸນີຖຸລລະນັນທາຈຶ່ງບວຊໃຫ້ສິກຂມານາດ້ວຍການໃຫ້

ປາຣິວາສິກສັນທະລະ໑" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີຖຸລລະນັນທາບອຊໃຫ້ສິກຂມານາດ້ວຍການໃຫ້ປາຣິວາສິກສັນທະ ແມ່ນແທ້ບໍ" ພິກສຸທັງຫລາຍທູລຣັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸຖຸລລະນັນທາຈຶ່ງບອຊໃຫ້ສິກຂມານາດ້ວຍປາຣິວາສິກສັນທະລະ ພິກສຸທັງຫລາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຣັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ "ດ້ວຍການໃຫ້ປາຣິວາສິກສັນທະ" ດ້ວຍໃຫ້ຄວາມເຫັນຊອບຂອງພິກສຸຄ້າງ ຫມາຍເຖິງພິກສຸນີເປັນເຈົ້າກີ້ເຈົ້າການໃຫ້ພິກສຸສລະສັນທະ ໂດຍຍິນຍອມແດ່ ບໍ່ຍິນຍອມແດ່ ແລ້ວນິມົນຕ໌ພິກສຸກຸ່ມອື່ນມາທໍາກັມນັ້ນໃຫມ່

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໑໗. ກຸມາຣິພູຕວັຄ ສິກຂາບົດທີ ໑໑ ສິກຂາບົທວິພັງຄ໌

**ພຣະບັນຍັດ**

[໑໑໕໗] ກໍພິກສຸນີໃດບອຊໃຫ້ສິກຂມານາດ້ວຍການໃຫ້ປາຣິວາສິກສັນທະ໑ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຖຸລລະນັນທາ ຈົບ

**ສິກຂາບົທວິພັງຄ໌**

[໑໑໕໘] ຄໍາວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌

ເອົາວ່າ ພິກຂຸນີ ໃນຄວາມໝາຍນີ້
ຄຳວ່າ ດ້ວຍການໃຫ້ປາຣິວາສິກສັນທະ ຄື ເມື່ອທີ່ປະຊຸມເລີກໄປແລ້ວ๒
ທີ່ຊື່ວ່າ ສິກຂມານາ ໄດ້ແກ່ ສາມເນຣີຜູ້ໄດ້ສຶກສາສິກຂາໃນທັມ ๖ ຂໍ້ ຕລອດ ๒ ປີ
ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້
ພິກຂຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສີມມຸດ
ສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ๒ ຄັ້ງ ຕ້ອງອາບັຕິ
ທຸກກະຕະ ๒ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກຂຸນີຜູ້ເປັນອຸປັຊຊາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະ
ແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ໝາຍເຫດ :**

๑ ການໃຫ້ປາຣິວາສິກສັນທະ ໃຫ້ສັນທະຄ້າງ ຄືພິກຂຸທັງຫລາຍປະຊຸມກັນທຳສັງຄກັມແຕ່ລົ້ມເລີກ
ສລະສັນທະ ເສັຽເພາະເຫຕຸບາງຢ່າງ ຖ້າຈະເຮັດສັງຄກັມນັ້ນໃຫມ່ ຕ້ອງນຳສັນທປາຣິສຸທທິຂອງ
ພິກຂຸຜູ້ຄວຣໃຫ້ສັນທປາຣິສຸທທິມາ ຈຶ່ງຄວຣທຳສັງຄກັມນັ້ນ ຖ້າພິກຂຸທັງຫລາຍລົ້ມເລີກສລະ
ສັນທະໃນສັງຄກັມແລ້ວພິກຂຸນີຈັດການໃຫ້ທຳສັງຄກັມນັ້ນໃຫມ່ ໂດຍບໍ່ນຳສັນທປາຣິສຸທທິມາ ຊື່
ວ່າໃຫ້ທຳໄປດ້ວຍການໃຫ້ປາຣິວາສິກສັນທະ (ກັງຂາ. ອ. ๔໐๓-๔໐๔)
๒ ເມື່ອສມາຊິກທີ່ປະຊຸມສລະສັນທະລົ້ມເລີກ ຫລືລຸກຂຶ້ນດ້ວຍພຽງແຕ່ສລະສັນທະດ້ວຍກາຍຫລືວາ
ຈາ ຊື່ວ່າໃຫ້ປາຣິວາສິກສັນທະ (ວິ. ອ. ๒/๑๑๖໗/๕๔๔)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [๔. ປາຈິຕຕີຍກັນທ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ๑๑ ອນາປັຕຕິວາຣ**

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[๑๑๖๘] ๑. ພິກຂຸນີຜູ້ບວຊໃຫ້ເມື່ອບໍຣິສັດຍັງບໍ່ເລີກ๑
๒. ພິກຂຸນີວິກົລຈິຕ
๓. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໑໑ ຈົບ

**ໝາຍເຫດ :**
໑ ໝາຍເຖິງຍັງບໍ່ສູລະສັນທະ ຍັງບໍ່ເລີກປະຊຸມ (ວິ. ອ. ໔/໑໑໖ລ/໕໔໔)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໑໔ ນິທານວັຕຖຸ

## ໗. ກຸມາຣີພູຕວັຄ

## ສິກຂາບົດທີ ໑໔

ວ່າດ້ວຍການບວຊໃຫ້ສິກຂມານາຫຸກໆປີ

### ເຣື້ອງພິກສຸນີຫລາຍຮູບ

[໑໑໗໐] ສູມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວຊໃຫ້ສິກຂມານາຫຸກໆປີ ທີ່ຢູ່ຈຶ່ງບໍ່ພຽງພໍ ຄົນທັງຫລາຍຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດ ພວກພິກສຸນີບວຊໃຫ້ສິກຂມານາຫຸກໆປີ (ເຮັດໃຫ້)ທີ່ຢູ່ບໍ່ພຽງພອລະ" ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີບວຊໃຫ້ສິກຂມານາຫຸກໆປີລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວຊໃຫ້ສິກຂມານາຫຸກໆປີ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີບວຊໃຫ້ສິກຂມານາຫຸກໆປີລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສູໃຫ້ເຫລື້ອມໃສູ ຫລືເຮັດໃຫ້ຄົນທີ່ເຫລື້ອມ

ໃສ່ຢູ່ແລ້ວໃຫ້ເຫລື້ອມໃສ່ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກ ຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໗໑] ກໍພິກສຸນີໃດບວຊໃຫ້ສິກຂມານາທຸກໆປີ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໑໔ ອນາ ປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໑໑໗໔] ຄຳວ່າ ກໍ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມໝາຍນີ້

ຄຳວ່າ ທຸກໆປີ ຄື ໃນທຸກໆປີ

ຄຳວ່າ ບວຊໃຫ້ ຄື ອຸປສົມບົທໃຫ້

ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນຫລືສົມມຸດ ສີມາ ຕ້ອງອາບັຕິປາຈິຕຕີຍ໌ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມວາຈາ ໔ ຄັ້ງ ຕ້ອງອາບັຕິ ທຸກກະຕະ ໔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຍາຍ໌ ຕ້ອງອາບັຕິປາຈິຕຕີຍ໌ ຄນະ ແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑໗໖] ໑. ພິກສຸນີບວຊໃຫ້ເວັ້ນຣະຍະ ໑ ປີ

໔. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໗. ກຸມາຣີພູຕວັຄ ສິກຂາບົດທີ ໑໕ ນິທານວັຕຖຸ**

**໗. ກຸມາຣີພູຕວັຄ**

**ສິກຂາບົດທີ ໑໕**

ວ່າດ້ວຍການບວຊໃຫ້ສິກຂມານາປີລະ ໔ ຮູບ

**ເຣື້ອງພິກສຸນີຫລາຍຮູບ**

[໑໑໗໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍບວຊໃຫ້ສິກຂມານາປີລະ ໔ ຮູບ໑ (ເຮັດໃຫ້)ທີ່ຢູ່ບໍ່ພຽງພໍເຫມືອນດັ່ງທີ່ເປັນມານັ້ນແຫລະ ຄົນທັງຫລາຍກໍຕໍາຫນິ ປະນາມ ໂພນທະນາ ຢ່າງນັ້ນແຫລະວ່າ "ຈັ່ງໃດພວກພິກສຸນີບວຊໃຫ້ສິກຂມານາປີລະ ໔ ຮູບລະ" ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕໍາຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີບວຊໃຫ້ສິກຂມານາປີລະ ໔ ຮູບລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລໍາດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີບວຊໃຫ້ສິກຂມານາປີລະ ໔ ຮູບ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີບວຊໃຫ້ສິກຂມານາປີລະ ໔ ຮູບລະ ພິກສຸທັງຫລາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**
๑ ພິກສຸນີເຫລົ່ານັ້ນບວຊໃຫ້ສິກຂາມານາ ເວັ້ນຣະຍະ ๑ ປີ ເພື່ອບໍ່ໃຫ້ເປັນການລ່ວງລະເມີດສິກຂາບົດທີ ๑๔ ບ່ອນວັດນີ້ ແຕ່ບວຊໃຫ້ຄາວລະ ๔ ຮູບ ຈຶ່ງເປັນເຫຕຸໃຫ້ຊົງບັນຍັດສິກຂາບົດທີ ๑๖ ນີ້ຂຶ້ນມາອີກ (ວິ. ອ. ๔/๑๑๗๕/๕๔๔)

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [๔. ປາຈິຕຕິຍກັນຫ໌] ໗. ກຸມາຣີພູຕວັດ ສິກຂາບົດທີ ๑๖ ອນາປັຕຕິວາຣ

### ພຣະບັນຍັດ

[๑๑๗๕] ກໍພິກສຸນີໃດບວຊໃຫ້ສິກຂມານາ ๔ ຮູບ ໃນ ๑ ປີ ຕ້ອງອາບັຕິປາຈິຕຕິຍ໌
ເຣື່ອງພິກສຸນີຫລາຍຮູບ ຈົບ

### ສິກຂາບົທວິພັງຄ໌

[๑๑๗๖] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ໃນ ๑ ປີ ຄື ໃນປີດຽວກັນ
ຄຳວ່າ ບວຊໃຫ້ສິກຂມານາ ๔ ຮູບ ຄື ອຸປສົມບົທໃຫ້ສິກຂມານາ ๔ ຮູບ
ພິກສຸນີຕັ້ງໃຈວ່າ "ຈະບວຊໃຫ້ສິກຂມານາ ๔ ຮູບ" ແລ້ວແສວງຫາຄນະ ອາຈາຣຍ໌ ບາຕຣຫລືຈີວອນ ຫລືສົມມຸດສີມາ ຕ້ອງອາບັຕິທຸກກະຕະ ຈົບຍັຕຕິ ຕ້ອງອາບັຕິທຸກກະຕະ ຈົບກັມອາຈາ ๔ ຄັ້ງ ຕ້ອງອາບັຕິທຸກກະຕະ ๔ ຕົວ ຈົບກັມວາຈາຄັ້ງສຸດທ້າຍ ພິກສຸນີຜູ້ເປັນອຸປັຊຊາຍ໌ຕ້ອງອາບັຕິປາຈິຕຕິຍ໌ ຄນະແລະອາຈາຣຍ໌ ຕ້ອງອາບັຕິທຸກກະຕະ

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[๑๑๗๗] ๑. ພິກສຸນີເວັ້ນຣະຍະ ๑ ປີ ບວຊໃຫ້ສິກຂມານາຮູບດຽວ

໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໕ ຈົບ
ກຸມາຣີພູຕວັຄທີ ໗ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໘. ສັຕຕຸປາຫນວັຄ ສິກຂາບົດທີ ໑ ນິທານວັຕຖຸ**

**໘. ສັຕຕຸປາຫນວັຄ**
ຫມວດວ່າດ້ວຍຣົ່ມແລະເກີບ

**ສິກຂາບົດທີ ໑**
ວ່າດ້ວຍພິກສຸນີຜູ້ບໍ່ເປັນໄຂ້ກັ້ງຄັນຮົ່ມແລະໃສ່ເກີບ

**ເຣື້ອງພິກສຸນີສັພພັຄຄີຍ໌**
[໑໑໗໗] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ກັ້ງຄັນຮົ່ມແລະໃສ່ເກີບ ຄົນທັງຫລາຍຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງກັ້ນຮົ່ມແລະໃສ່ເກີບເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງກັ້ງຄັນຮົ່ມແລະໃສ່ເກີບລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**
ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ກັ້ນຮົ່ມແລະໃສ່ເກີບ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງກັ້ງຄັນຮົ່ມແລະໃສ່ເກີບລະ ພິກສຸທັງ

ຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ ໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

ກໍພິກສຸນີໃດກັ້ງຄັນຮົ່ມແລະໃສ່ເກີບ ຕ້ອງອາບັຕິປາຈິຕຕີຍ໌

ສິກຂາບົທນີ້ພຣະຜູ້ມີພຣະພາກຊົງບັນຍັດໄວ້ແກ່ພິກສຸນີທັງຫລາຍຢ່າງນີ້

ເຣື້ອງພິກສຸນີສັພພັຄຄີຍ໌ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໘. ສັຕຕຸປາຫນວັຄ ສິກຂາບົດທີ ໑ ສິກຂາບົທວິພັງຄ໌**

**ເຣື້ອງພິກສຸນີເປັນໄຂ້**

[໑໑໗໘] ສມັຍນັ້ນ ພິກສຸນີຮູບນຶ່ງເປັນໄຂ້ ຂາດຮົ່ມແລະເກີບແລ້ວ ທ່ານຈະບໍ່ມີຄວາມຜາສຸກ ພວກພິກສຸຈຶ່ງຂາບທູລເຣື້ອງນັ້ນໃຫ້ພຣະຜູ້ມີພຣະພາກຊົງຊາບ ຯລຯ

**ຊົງອນຸຍາຕຮົ່ມແລະເກີບ**

ພຣະຜູ້ມີພຣະພາກຊົງອນຸຍາຕວ່າ "ພິກສຸທັງຫລາຍ ເຮົາອນຸຍາຕກັ້ງຮົ່ມແລະໃສ່ເກີບແກ່ພິກສຸນີຜູ້ເປັນໄຂ້" ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະອນຸບັນຍັດ**

[໑໑໗໐] ອີກຢ່າງນຶ່ງ ພິກສຸນີໃດຜູ້ບໍ່ເປັນໄຂ້ ກັ້ງຄັນຮົ່ມແລະໃສ່ເກີບ ຕ້ອງອາບັຕິປາຈິຕຕີຍ໌ຍ໌

ເຣື້ອງພິກສຸນີເປັນໄຂ້ ຈົບ

**ສິກຂາບົທວິພັງຄ໌**

[໑໑໗໑] ຄຳວ່າ ອີກຢ່າງນຶ່ງ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌

ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ຜູ້ບໍ່ເປັນໄຂ້ ຄື ຜູ້ທີ່ຂາດຣົ່ມແລະເກີບກໍຍັງມີຄວາມຜາສຸກ
ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ຜູ້ຂາດຣົ່ມແລະເກີບຍ່ອມບໍ່ມີຄວາມຜາສຸກ
ທີ່ຊື່ວ່າ ຣົ່ມ ໄດ້ແກ່ຣົ່ມ ໓ ຊນິດ ຄື (໑) ຣົ່ມຂາວ (໒) ຣົ່ມລຳແພນ (໓) ຣົ່ມໃບໄມ້ທີ່ຍິບ
ເປັນວົງກົມ ຍິບເຂົ້າກັບຊີ່
ຄຳວ່າ ກັ້ນ . . . ສູວມໃສ່ ຄື ພິກສຸນີກັ້ນສູວມໃສ່ແມ່ນຄັ້ງດຽວ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໑໗໔] ບໍ່ເປັນໄຂ້ ພິກສຸນີສຳຄັນວ່າບໍ່ເປັນໄຂ້ ກັ້ງຄັນຣົ່ມແລະໃສ່ເກີບ ຕ້ອງອາບັຕິປາຈິຕຕີຍ໌
ບໍ່ເປັນໄຂ້ ພິກສຸນີບໍ່ແນ່ໃຈ ກັ້ງຄັນຣົ່ມແລະໃສ່ເກີບ ຕ້ອງອາບັຕິປາຈິຕຕີຍ໌
ບໍ່ເປັນໄຂ້ ພິກສຸນີສຳຄັນວ່າເປັນໄຂ້ ກັ້ງຄັນຣົ່ມແລະໃສ່ເກີບ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກະຕະ**

ພິກສຸນີກັ້ງຄັນຣົ່ມ ແຕ່ບໍ່ໃສ່ເກີບ ຕ້ອງອາບັຕິທຸກກະຕະ
ພິກສຸນີໃສ່ເກີບ ແຕ່ບໍ່ກັ້ງຄັນຣົ່ມ ຕ້ອງອາບັຕິທຸກກະຕະ
ເປັນໄຂ້ ພິກສຸນີສຳຄັນວ່າບໍ່ເປັນໄຂ້ ກັ້ງຄັນຣົ່ມແລະໃສ່ເກີບ ຕ້ອງອາບັຕິທຸກກະຕະ
ເປັນໄຂ້ ພິກສຸນີບໍ່ແນ່ໃຈ ກັ້ງຄັນຣົ່ມແລະໃສ່ເກີບ ຕ້ອງອາບັຕິທຸກກະຕະ
ເປັນໄຂ້ ພິກສຸນີສຳຄັນວ່າເປັນໄຂ້ ກັ້ງຄັນຣົ່ມແລະໃສ່ເກີບ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໑໗໕] ໑. ພິກສຸນີຜູ້ເປັນໄຂ້
໒. ພິກສຸນີໃຊ້ຣົ່ມຢູ່ໃນອາຣາມຫລືອຸປຈາຣແຫ່ງອາຣາມ

໓. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໔ ນິທານວັຕຖຸ**

**໙. ສັຕຕຸປາຫນວັຄ**

**ສິກຂາບົດທີ ໔**

ວ່າດ້ວຍການຍ່າງທາງດ້ວຍຍານພາຫນະ

**ເຣື້ອງພິກສຸນີສັພພັຄຄີຍ໌**

[໑໑໗໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ໂດຍສານຍານໄປ ຄົນທັງຫລາຍຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໂດຍສານຍານໄປເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໂດຍສານຍານໄປລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ໂດຍສານຍານໄປ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໂດຍສານຍານໄປລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສຫລືເຮັດໃຫ້ຄົນທີ່

ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໔ ສິກຂາບົທວິພັງຄ໌**

**ພຣະບັນຍັດ**

ກໍພິກສຸນີໃດໂດຍສານຍານໄປ ຕ້ອງອາບັຕິປາຈິຕຕີຍ໌
ສິກຂາບົທນີ້ພຣະຜູ້ມີພຣະພາກຊົງບັນຍັດໄວ້ແກ່ພິກສຸນີທັງຫລາຍຢ່າງນີ້

ເຣື່ອງພິກສຸນີສັພພັຄຄີຍ໌ ຈົບ

**ເຣື້ອງພິກສຸນີເປັນໄຂ້**

[໑໑໗໕] ສມັຍນັ້ນ ພິກສຸນີຮູບນຶ່ງເປັນໄຂ້ ບໍ່ສາມາດຈະຍ່າງຕີນໄປໄດ້ ພວກພິກສຸຈຶ່ງຂາບທູລເຣື້ອງນັ້ນໃຫ້ພຣະຜູ້ມີພຣະພາກຊົງຊາບ ຯລຯ

**ຊົງອນຸຍາຕຍານພາຫນະ**

ພຣະຜູ້ມີພຣະພາກຊົງອນຸຍາຕວ່າ "ພິກສຸທັງຫລາຍ ເຮົາອນຸຍາຕຍານແກ່ພິກສຸນີຜູ້ເປັນໄຂ້" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະອນຸບັນຍັດ**

[໑໑໗໖] ອີກຢ່າງນຶ່ງ ພິກສຸນີໃດຜູ້ບໍ່ເປັນໄຂ້ ໂດຍສານຍານໄປ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີເປັນໄຂ້ ຈົບ

**ສິກຂາບົທວິພັງຄ໌**

[໑໑໗໗] ຄຳວ່າ ອີກຢ່າງນຶ່ງ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌

ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ຜູ້ບໍ່ເປັນໄຂ້ ຄື ຜູ້ສາມາດຍ່າງຕີນໄປໄດ້
ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ຜູ້ບໍ່ສາມາດຍ່າງຕີນໄປໄດ້
ທີ່ຊື່ວ່າ ຍານ ໄດ້ແກ່ ວອ ຣຖ ກວຽນ ຄານຫາມ ແຄຣ່ ເປລຫາມ
ຄຳວ່າ ໂດຍສາຣ. . . ໄປ ຄື ໄປດ້ວຍຍານແມ່ນຄັ້ງດຽວ ຕ້ອງອາບັຕິປາຈິຕຕີຍ໌

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໑໗໗] ບໍ່ເປັນໄຂ້ ພິກສຸນີສຳຄັນວ່າບໍ່ເປັນໄຂ້ ໂດຍສາຣຍານໄປ ຕ້ອງອາບັຕິປາຈິຕຕີຍ໌
ບໍ່ເປັນໄຂ້ ພິກສຸນີບໍ່ແນ່ໃຈ ໂດຍສາຣຍານໄປ ຕ້ອງອາບັຕິປາຈິຕຕີຍ໌
ບໍ່ເປັນໄຂ້ ພິກສຸນີສຳຄັນວ່າເປັນໄຂ້ ໂດຍສາຣຍານໄປ ຕ້ອງອາບັຕິປາຈິຕຕີຍ໌

**ທຸກທຸກກະຕະ**

ເປັນໄຂ້ ພິກສຸນີສຳຄັນວ່າບໍ່ເປັນໄຂ້ ໂດຍສາຣຍານໄປ ຕ້ອງອາບັຕິທຸກກະຕະ
ເປັນໄຂ້ ພິກສຸນີບໍ່ແນ່ໃຈ ໂດຍສາຣຍານໄປ ຕ້ອງອາບັຕິທຸກກະຕະ
ເປັນໄຂ້ ພິກສຸນີສຳຄັນວ່າເປັນໄຂ້ ໂດຍສາຣຍານໄປ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໑໗໘] ໑. ພິກສຸນີຜູ້ເປັນໄຂ້
໒. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑ ນິທານວັຕຖຸ

## ໙. ສັຕຕຸປາຫນວັຄ

### ສິກຂາບົດທີ ໑

ວ່າດ້ວຍການໃຊ້ເຄື່ອງປະດັບແອວ

### ເຣື່ອງພິກສຸນີຮູບນຶ່ງ

[໑໑໙໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂດກຸງສາວັຕຖີ ຄັ້ງນັ້ນ ພິກສຸນີຮູບນຶ່ງເປັນພິກສຸນີປະຈຳຕະກູນຂອງຍິງຄົນນຶ່ງ ສມັຍນັ້ນ ຍິງນັ້ນໄດ້ກ່າວກັບພິກສຸນີນັ້ນດັ່ງນີ້ວ່າ "ແມ່ເຈົ້າທ່ານໄປຣດນຳເຄື່ອງປະດັບແອວນີ້ໄປໃຫ້ຍິງຊື່ພຸ້ນ" ລຳດັບນັ້ນ ພິກສຸນີນັ້ນຄິດວ່າ "ຖ້າເຮົາຈະໃສ່ບາຕຣຢ່າງໄປ ເຮົາຕ້ອງເສັຽຫາຍແນ່" ຈຶ່ງສວມໃສ່ເຄື່ອງປະດັບຢ່າງໄປ ເມື່ອດ້າຍຂາດເຄື່ອງປະດັບແອວຕົກເຮັ່ຽໄຮຍລົງເທິງຖນົນ ຄົນທັງຫລາຍຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຊ້ເຄື່ອງປະດັບແອວເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີຈຶ່ງໃຊ້ເຄື່ອງປະດັບແອວລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຄ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີໃຊ້ເຄື່ອງປະດັບແອວແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີຈຶ່ງໃຊ້ເຄື່ອງປະດັບແອວລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຣັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະ

ແດງດັ່ງນີ້

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑ ອນາປັຕຕິວາຣ

### ພຣະບັນຍັດ

[໑໑໙໑] ກໍພິກສຸນີໃດໃຊ້ເຄື່ອງປະດັບແອວ ຕ້ອງອາບັຕິປາຈິຕຕິຍ໌

ເຣື່ອງພິກສຸນີຮູບນຶ່ງ ຈົບ

### ສິກຂາບົທວິພັງຄ໌

[໑໑໙໔] ຄໍາວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າຊື່ວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ເຄື່ອງປະດັບແອວ ໄດ້ແກ່ ເຄື່ອງປະດັບທີ່ສວມໃສ່ແອວຊນິດໃດຊນິດນຶ່ງ
ຄໍາວ່າ ໃຊ້ ຄື ພິກສຸນີໃຊ້ແມ່ນຄັ້ງດຽວ ຕ້ອງອາບັຕິປາຈິຕຕິຍ໌

### ອນາປັຕຕິວາຣ

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໑໙໑] ໑. ພິກສຸນີໃຊ້ສາຍຣັດແອວເພາະມີເຫຕຸຜົລຄືອາພາທ
໔. ພິກສຸນີວິກົລຈິຕ
໑. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໔ ນິທານວັຕຖຸ

### ໙. ສັຕຕຸປາຫນວັຄ

**ສິກຂາບົດທີ ໔**

ວ່າດ້ວຍການໃຊ້ເຄື່ອງປະດັບຂອງສະຕຣີ

**ເລື່ອງພິກສຸນີສັພພັຄຄີຍ໌**

[໑໑໙໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂດກຸງສາວັດຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ໃຊ້ເຄື່ອງປະດັບຂອງຍິງ ຄົນທັງຫລາຍຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຊ້ເຄື່ອງປະດັບຂອງສະຕຣີເໝືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຊ້ເຄື່ອງປະດັບຂອງສະຕຣີລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື່ອງນີ້ເປັນຕົ້ນເຫຕຸ ຊົງສອບສວນພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ໃຊ້ເຄື່ອງປະດັບຂອງສະຕຣີ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໃຊ້ເຄື່ອງປະດັບຂອງສະຕຣີລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໑໙໕] ກໍພິກສຸນີໃດໃຊ້ເຄື່ອງປະດັບຂອງສະຕຣີ ຕ້ອງອາບັຕິປາຈິຕຕີຍ໌

ເລື່ອງພິກສຸນີສັພພັຄຄີຍ໌ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໔ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໑໑ລ໖] ຄໍາວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . ໃດ ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ເຄື່ອງປະດັບຂອງສະຕຣີ ໄດ້ແກ່ ເຄື່ອງປະດັບສີສະ ເຄື່ອງປະດັບລໍາຄໍ ເຄື່ອງປະດັບມື ເຄື່ອງປະດັບຕີນ ເຄື່ອງປະດັບແອວ

ຄໍາວ່າ ໃຊ້ ຄື ພິກສຸນີໃຊ້ແມ່ນຄັ້ງດຽວ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໑ລ໗] ໑. ພິກສຸນີໃຊ້ເຄື່ອງປະດັບຂອງສະຕຣີເພາະມີເຫຕຸຜິລຄືອາພາທ

໔. ພິກສຸນີວິກົລຈິຕ

໓. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໔ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໔. ສັຕຕຸປາຫນວັຄ ສິກຂາບົດທີ ໕**

**໔. ສັຕຕຸປາຫນວັຄ**

**ສິກຂາບົດທີ ໕**

ວ່າດ້ວຍກາຣໃຊ້ຂອງຫອມເຄື່ອງຍ້ອມຜິວ

**ເຣື້ອງພິກສຸນີສັພພັຄຄີຍ໌**

[໑໑ລ໘] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ສົງສນານດ້ວຍຂອງຫອມແລະເຄື່ອງຍ້ອມຜິວ ຄົນທັງຫລາຍຕໍາຫນິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີທັງຫລາຍຈຶ່ງສົງສນານດ້ວຍຂອງຫອມແລະເຄື່ອງຍ້ອມຜິວເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ” ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕໍາຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນ

ຕຳໜິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງໄດ້ສີງສູນານດ້ວຍຂອງຫອມ ແລະເຄື່ອງຍ້ອມຜິວລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຊ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຊ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ສຣົງສູນານດ້ວຍຂອງຫອມແລະເຄື່ອງຍ້ອມຜິວ ແມ່ນແທ້ບໍ” ພິກສຸທັງຫລາຍທູລຮັບວ່າ “ຈິງພຣະພຸດທະເຈົ້າຂ້າ” ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງສີງສູນານດ້ວຍຂອງຫອມແລະເຄື່ອງຍ້ອມຜິວລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ” ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໕ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໑໙໙] ກໍພິກສຸນີໃດສີງສູນານດ້ວຍຂອງຫອມແລະເຄື່ອງຍ້ອມຜິວ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີສັພພັຄຄີຍ໌ ຈົບ

**ສິກຂາບົທວິພັງຄ໌**

[໑໔໐໐] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມໝາຍນີ້
ທີ່ຊື່ວ່າ ຂອງຫອມ ໄດ້ແກ່ ຂອງທີ່ມີກິ່ນຫອມຊນິດໃດຊນິດນຶ່ງ
ທີ່ຊື່ວ່າ ເຄື່ອງຍ້ອມຜິວ ໄດ້ແກ່ ເຄື່ອງຍ້ອມຜິວຊນິດໃດຊນິດນຶ່ງ
ຄຳວ່າ ສີງສູນານ ຄື ພິກສຸນີສີງສູນານ ຕ້ອງອາບັຕິທຸກກະຕະໃນຂນະທີ່ສີງສູນານສຣົງສູດິນເສັດ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໔໐໑] ໑. ພິກສຸນີສຽງສູດົນເພາະມີເຫຕຸຜົລຄືອາພາຫ

໔. ພິກສຸນີວິກົລຈິຕ

໖. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໕ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໖. ສັຕຕຸປາຫນວັຄ ສິກຂາບົດທີ ໖ ນິທານວັຕຖຸ**

**໖. ສັຕຕຸປາຫນວັຄ**

**ສິກຂາບົດທີ ໖**

ວ່າດ້ວຍການໃຊ້ຜົງແປ້ງອົບກິ່ນ

**ເຣື້ອງພິກສຸນີສັພພັຄຄີຍ໌**

[໑໔໐໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ສົງສນານ ດ້ວຍແປ້ງທີ່ອົບກິ່ນ ຄົນທັງຫລາຍຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີຈິ່ງສົງສນານດ້ວຍແປ້ງທີ່ອົບກິ່ນ ເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ” ພິກສຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ “ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈິ່ງສົງສນານດ້ວຍແປ້ງທີ່ອົບກິ່ນລະ” ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ “ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ສົງສນານດ້ວຍແປ້ງທີ່ອົບກິ່ນ

ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ ຈິງພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕໍາຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງສົງສນານດ້ວຍແປ້ງທີ່ອົບກິ່ນລະ ພິກສຸທັງຫລາຍ ການກະທໍາຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໒໐໓] ກໍພິກສຸນີໃດສົງສນານດ້ວຍແປ້ງອົບກິ່ນ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີສັພພັຄຄີຍ໌ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໓ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໑໒໐໔] ຄໍາວ່າ ກໍ . . . ໃດ ຄວາມວ່າ ຜູ້ໃດ ຄື ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກ ຕຣັສວ່າ ກໍ . . . ໃດ

ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ອົບກິ່ນ ໄດ້ແກ່ ອບດ້ວຍກິ່ນຫອມຊນິດໃດຊນິດນຶ່ງ

ທີ່ຊື່ວ່າ ແປ້ງ ພຣະຜູ້ມີພຣະພາກຕຣັສຫມາຍເຖິງແປ້ງງາ

ຄໍາວ່າ ສົງສນານ ຄື ພິກສຸນີສົງສນານ ຕ້ອງອາບັຕິທຸກກະຕະໃນຂນະທີ່ສົງສນານສຣົງສດົນເສັດຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໒໐໕] ໑. ພິກສຸນີສຣົງສດົນເພາະມີເຫຕຸຜົລຄືອາພາທ

໒. ພິກສຸນີສົງສນານດ້ວຍແປ້ງທີ່ໃຊ້ຕາມປົກຕິ

໓. ພິກຂຸນີວິກົລຈິຕ
໔. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໖ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໗ ນິທານວັຕຖຸ**

**໙. ສັຕຕຸປາຫນວັຄ**

**ສິກຂາບົດທີ ໗**

ວ່າດ້ວຍກາຣໃຫ້ບີບນວດ

**ເຣື້ອງພິກຂຸນີຫລາຍຮູບ**

[໑໘໐໖] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີທັງຫລາຍໃຊ້ພິກຂຸນີໃຫ້ບີບແດ່ ໃຫ້ນວດແດ່ ຄົນທັງຫລາຍທຽວຈາຣິກໄປຕາມວິຫາຣເຫັນແລ້ວຕຳໜິ ປະນາມໂພນທະນາວ່າ "ຈັ່ງໃດພວກພິກຂຸນີຈຶ່ງໃຊ້ພິກຂຸນີໃຫ້ບີບແດ່ ໃຫ້ນວດແດ່ ເໝືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກຂຸນີທັງຫລາຍໄດ້ຍິນຄົນເຫລົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸນີຜູ້ມັກນ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸນີຈຶ່ງໃຊ້ພິກຂຸນີໃຫ້ບີບແດ່ ໃຫ້ນວດແດ່ລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພວກພິກຂຸນີໃຊ້ພິກຂຸນີໃຫ້ບີບແດ່ໃຫ້ນວດແດ່ ແມ່ນແທ້ບໍ" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພິກຂຸທັງຫລາຍຈັ່ງໃດພວກພິກຂຸນີຈຶ່ງໃຊ້ພິກຂຸນີໃຫ້ບີບແດ່ ໃຫ້ນວດແດ່ລະ ພິກຂຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດ

ໃຫ້ດິນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ດິນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໔໐໗] ກໍພິກສຸນີໃດໃຊ້ພິກສຸນີໃຫ້ບີບຫລືໃຫ້ນວດ ຕ້ອງອາບັຕິປາຈິຕຕີຍ໌

ເຣື່ອງພິກສຸນີຫລາຍຮູບ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໗ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໑໔໐໘] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ໃຊ້ພິກສຸນີ ໄດ້ແກ່ ໃຊ້ພິກສຸນີຮູບອື່ນ
ຄຳວ່າ ໃຫ້ບີບ ຄື ພິກສຸນີໃຊ້ໃຫ້ບີບ ຕ້ອງອາບັຕິປາຈິຕຕີຍ໌
ຄຳວ່າ ຫລືໃຫ້ນວດ ຄື ໃຊ້ໃຫ້ນວດ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໔໐໙] ໑. ພິກສຸນີຜູ້ເປັນໄຂ້
໒. ພິກສຸນີຜູ້ມີເຫຕຸຂັດຂ້ອງ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໗ ຈົບ

## ພຣະວິນັຍປິຏົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໗-໙-໑໐ ນິທານວັຕຖຸ

### ໙. ສັຕຕຸປາຫນວັຄ

### ສິກຂາບົດທີ ໗-໙-໑໐໑

ວ່າດ້ວຍການໃຊ້(ສີກຂມານາຯລຯສາມເນຣີ ຯລຯ)ຄຣືຫັສຖ໌ໃຫ້ບີບນວດ

### ເຣື້ອງພິກສຸນີຫລາຍຮູບ

[໑໔໑໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍ(ໃຊ້ສີກຂມານາໃຫ້ບີບແດ່ ໃຫ້ນວດແດ່ ຯລຯ ໃຊ້ສາມເນຣີໃຫ້ບີບແດ່ ໃຫ້ນວດແດ່ ຯລຯ) ໃຊ້ຍິງຄຣືຫັສຖ໌ໃຫ້ບີບແດ່ ໃຫ້ນວດແດ່ ຄົນທັງຫລາຍທຽວຈາຣິກໄປຕາມວິຫາຣເຫັນຈຶ່ງຕຳຫນິປະນາມໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຊ້ຍິງຄຣືຫັສຖ໌ໃຫ້ບີບແດ່ ໃຫ້ນວດແດ່ເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນຄົນພວກນັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງໃຊ້ຍິງຄຣືຫັສຖ໌ ໃຫ້ບີບແດ່ ໃຫ້ນວດແດ່ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີໃຊ້ຍິງຄຣືຫັສຖ໌ໃຫ້ບີບແດ່ ໃຫ້ນວດແດ່ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີຈຶ່ງໃຊ້ຍິງຄຣືຫັສຖ໌ໃຫ້ບີບແດ່ ໃຫ້ນວດແດ່ລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ ສິກຂາບົດທີ ໗-ລ ຄວນຊາບວ່າລະໄວ້ ທີ່ປາກົດຢູ່ນີ້ ເປັນຂໍ້ຄວາມຂອງສິກຂາບົດທີ ໑໐ ສິກຂາບົດທີ ໗ ວ່າດ້ວຍການໃຊ້ສິກຂມານາ ສິກຂາບົດທີ ລ ວ່າດ້ວຍການໃຊ້ສາມເນຣີ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ລ. ສັຕຕຸປາຫນວັຄ ສິກຂາບົດທີ ໗-ລ-໑໐ ອນາປັຕຕິວາຣ**

**ພຣະບັນຍັດ**

[໑໔໑໑] ກໍພິກສຸນີໃດ(ໃຊ້ສິກຂມານາ ຯລຯ ໃຊ້ສາມເນຣີຯລຯ) ໃຊ້ຍິງຄຣືຫັສຖ໌ໃຫ້ບີບຫລືໃຫ້ນວດ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໔໑໔] ຄໍາວ່າ ກໍ. . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ
ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ທີ່ຊື່ວ່າ ສິກຂມານາ ໄດ້ແກ່ສະຕຣີຜູ້ສຶກສາສິກຂາໃນທັມ ຝ ຂໍ້ຕລອດ ໔ ປີ
ຊື່ວ່າ ສາມເນຣີ ໄດ້ແກ່ ສະຕຣີຜູ້ຮັກສາສິກຂາບົທ ໑໐ ຂໍ້
ທີ່ຊື່ວ່າ ຍິງຄຣືຫັສຖ໌ ພຣະຜູ້ມີພຣະພາກຕຣັສຫມາຍເຖິງສະຕຣີຜູ້ຄອງເຮືອນ
ຄໍາວ່າ ໃຫ້ບີບ ຄື ພິກສຸນີໃຊ້ໃຫ້ບີບ ຕ້ອງອາບັຕິປາຈິຕຕີຍ໌
ຄໍາວ່າ ຫລືໃຫ້ນວດ ຄື ໃຊ້ໃຫ້ນວດ ຕ້ອງອາບັຕິປາຈິຕຕີຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໔໑໖] ໑. ພິກສຸນີໃຊ້ໃຫ້ບີບຫລືນວດເພາະອາພາທເປັນເຫຕຸ
໔. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໓. ພິກຂຸນີວິກົລຈິຕ
໔. ພິກຂຸນີຕົ້ນບັນຍັດ

ສິກຂາບົດທີ ໗-໙-໑໐ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນທ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑໑ ນິທານວັຕຖຸ**

**໙. ສັຕຕຸປາຫນວັຄ**

**ສິກຂາບົດທີ ໑໑**
ວ່າດ້ວຍການນັ່ງເທິງອາສນະໂດຍບໍ່ຂໍໂອກາສກ່ອນ

**ເຣື້ອງພິກຂຸນີຫລາຍຮູບ**
[໑໔໑໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກຂຸນີທັງຫລາຍບໍ່ບອກກ່ອນນັ່ງເທິງອາສນະຂ້າງໜ້າພິກຂຸ໑ ພິກຂຸທັງຫລາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກຂຸນີບໍ່ບອກກ່ອນນັ່ງເທິງອາສນະຂ້າງໜ້າພິກຂຸລະ" ຄັນແລ້ວ ພິກຂຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກຂຸທັງຫລາຍໃຫ້ຊາບ ພວກພິກຂຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຄ໌ບັນຍັດສິກຂາບົທ**
ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຄ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກຂຸທັງຫລາຍວ່າ "ພິກຂຸທັງຫລາຍ ຊາບວ່າ ພວກພິກຂຸນີບໍ່ບອກກ່ອນນັ່ງເທິງອາສນະຂ້າງໜ້າພິກຂຸແມ່ນແທ້ບໍ່" ພິກຂຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ຯລຯ ພິກຂຸທັງຫລາຍ ຈັ່ງໃດພວກພິກຂຸນີບໍ່ບອກກ່ອນນັ່ງເທິງອາສນະຂ້າງໜ້າພິກຂຸລະ ພິກຂຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ທຳຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກຂຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ ຄໍາວ່າ "ຂ້າງຫນ້າພິກສຸ" ບໍ່ໄດ້ຫມາຍເຖິງສະເພາະຕຣົງຫນ້າພິກສຸເທົ່ານັ້ນ ແຕ່ຫມາຍຣວມເຖິງບໍຣິເວນໃກ້ໆພິກສຸ ບໍຣິເວນໂດຍຣອບໃກ້ກັບພິກສຸ (ກງີຂາ. ໑. ໔໐໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑໑ ບົທພາຊນີຍ໌**

**ພຣະບັນຍັດ**

[໑໔໑໕] ກໍພິກສຸນີໃດບໍ່ບອກກ່ອນນັ່ງເທິງອາສນະຂ້າງຫນ້າພິກສຸ ຕ້ອງອາບັຕິປາຈິຕຕິຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ສິກຂາບົທວິພັງຄ໌**

[໑໔໑໖] ຄໍາວ່າ ກໍ. . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ. . . ໃດ

ຄໍາວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄໍາວ່າ ຂ້າງຫນ້າພິກສຸ ຄື ຂ້າງຫນ້າອຸປສົມບັນ

ຄໍາວ່າ ບໍ່ບອກກ່ອນ ຄື ບໍ່ຂໍໂອກາສກ່ອນ

ຄໍາວ່າ ນັ່ງເທິງອາສນະ ຄື ພິກສຸນີນັ່ງໂດຍທີ່ສຸດແມ່ນບົນພື້ນດິນ ຕ້ອງອາບັຕິປາຈິຕຕິຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕິຍ໌**

[໑໔໑໗] ຍັງບໍ່ໄດ້ບອກ ພິກສຸນີສໍາຄັນວ່າຍັງບໍ່ໄດ້ບອກ ນັ່ງເທິງອາສນະ ຕ້ອງອາບັຕິປາຈິຕຕິຍ໌

ຍັງບໍ່ໄດ້ບອກ ພິກສຸນີບໍ່ແນ່ໃຈ ນັ່ງເທິງອາສນະ ຕ້ອງອາບັຕິປາຈິຕຕິຍ໌

ຍັງບໍ່ໄດ້ບອກ ພິກສຸນີສໍາຄັນວ່າບອກແລ້ວ ນັ່ງເທິງອາສນະ ຕ້ອງອາບັຕິປາຈິຕຕິຍ໌

**ທຸກກະຕະ**

ບອກແລ້ວ ພິກສຸນີສໍາຄັນວ່າຍັງບໍ່ໄດ້ບອກ ນັ່ງເທິງອາສນະ ຕ້ອງອາບັຕິທຸກກະຕະ

ບອກແລ້ວ ພິກສຸນີບໍ່ແນ່ໃຈ ນັ່ງເທິງອາສນະ ຕ້ອງອາບັຕິທຸກກະຕະ
ບອກແລ້ວ ພິກສຸນີສໍາຄັນວ່າບອກແລ້ວ ນັ່ງເທິງອາສນະ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

[໑໔໑໗] ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
໑. ພິກສຸນີບອກກ່ອນຈຶ່ງນັ່ງເທິງອາສນະ
໒. ພິກສຸນຜູ້ເປັນໄຂ້
໓. ພິກສຸນີຜູ້ມີເຫດຸຂັດຂ້ອງ
໔. ພິກສຸນີວິກົລຈິຕ
໕. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໑ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑໔ ນິທານວັຕຖຸ**

**໙. ສັຕຕຸປາຫນວັຄ**

**ສິກຂາບົດທີ ໑໔**

ວ່າດ້ວຍການຖາມບັນຫາກະພິກສຸໂດຍບໍ່ໄດ້ຂໍໂອກາສ

**ເຣື້ອງພິກສຸນີຫລາຍຮູບ**

[໑໔໑໘] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີທັງຫລາຍຖາມບັນຫາພິກສຸທີ່ຕົນຍັງບໍ່ໄດ້ຂໍໂອກາສ ພິກສຸທັງຫລາຍຈຶ່ງຕໍາຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງຖາມບັນຫາພິກສຸທີ່ຕົນຍັງບໍ່ໄດ້ຂໍໂອກາສລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນໍາເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນໍາເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີຖາມບັນຫາພິກສຸທີ່ຕົນຍັງບໍ່ໄດ້ຂໍໂອກາສແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີ ຈຶ່ງຖາມບັນຫາພິກສຸທີ່ຕົນຍັງບໍ່ໄດ້ຂໍໂອກາສລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

[໑໒໔໐] ກໍພິກສຸນີໃດຖາມບັນຫາພິກສຸທີ່ຕົນຍັງບໍ່ໄດ້ຂໍໂອກາສ໑ ຕ້ອງອາບັຕິປາຈິຕຕີຍ໌

ເຣື້ອງພິກສຸນີຫລາຍຮູບ ຈົບ

**ໝາຍເຫດ :**

໑ ຄຳວ່າ "ຍັງບໍ່ໄດ້ຂໍໂອກາສ" ຫມາຍເຖິງຍັງບໍ່ຣະບຸເຣື້ອງທີ່ຈະຖາມ ເພາະສະນັ້ນ ຂໍໂອກາສທີ່ຈະຖາມບັນຫາໃນພຣະສູຕຣແລ້ວໄປຖາມພຣະວິນັຍຫລືພຣະອພິທັມ ຫລືຂໍໂອກາສໃນພຣະວິນັຍແລ້ວຖາມພຣະສູຕຣຫລືພຣະອພິທັມ ຫລືຂໍໂອກາສໃນພຣະອພິທັມແລ້ວຖາມພຣະສູຕຣຫລືພຣະວິນັຍຕ້ອງອາບັຕິປາຈິຕຕີຍ໌ (ກງ໌ຂາ. ອ. ໔໐໗)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑໔ ບົທພາຊນີຍ໌**

**ສິກຂາບົທວິພັງຄ໌**

[໑໒໔໑] ຄຳວ່າ ກໍ. . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ຄຳວ່າ ທີ່ຕົນຍັງບໍ່ໄດ້ຂໍໂອກາສ ຄື ຕນຍັງບໍ່ໄດ້ບອກ

ຄຳວ່າ ພິກສຸ ໄດ້ແກ່ ອຸປສັມບັນ

ຄຳວ່າ ຖາມບັນຫາ ຄື ພິກສຸນີຂໍໂອກາສໃນພຣະສູຕຣແຕ່ຖາມພຣະວິນັຍຫລືພຣະອພິທັມ ຕ້ອງ

ອາບັຕິປາຈິຕຕີຍ໌
ຂໍໂອກາສໃນພຣະວິນັຍ ແຕ່ຖາມພຣະສູຕຣຫລືພຣະອພິທັມ ຕ້ອງອາບັຕິປາຈິຕຕີຍ໌
ຂໍໂອກາສໃນພຣະອພິທັມ ແຕ່ຖາມພຣະສູຕຣຫລືພຣະວິນັຍ ຕ້ອງອາບັຕິປາຈິຕຕີຍ໌

**ບົທພາຊນີຍ໌**

**ຕິກປາຈິຕຕີຍ໌**

[໑໒໒໒] ຍັງບໍ່ໄດ້ບອກ ພິກສຸນີສໍາຄັນວ່າຍັງບໍ່ໄດ້ບອກ ຖາມປັນຫາ ຕ້ອງອາບັຕິປາຈິຕຕີຍ໌
ຍັງບໍ່ໄດ້ບອກ ພິກສຸນີບໍ່ແນ່ໃຈ ຖາມປັນຫາ ຕ້ອງອາບັຕິປາຈິຕຕີຍ໌
ຍັງບໍ່ໄດ້ບອກ ພິກສຸນີສໍາຄັນວ່າບອກແລ້ວ ຖາມປັນຫາ ຕ້ອງອາບັຕິປາຈິຕຕີຍ໌

**ທຸກກຸກກະຕະ**

ບອກແລ້ວ ພິກສຸນີສໍາຄັນວ່າຍັງບໍ່ໄດ້ບອກ ຖາມປັນຫາ ຕ້ອງອາບັຕິທຸກກະຕະ
ບອກແລ້ວ ພິກສຸນີບໍ່ແນ່ໃຈ ຖາມປັນຫາ ຕ້ອງອາບັຕິທຸກກະຕະ
ບອກແລ້ວ ພິກສຸນີສໍາຄັນວ່າບອກແລ້ວ ຖາມປັນຫາ ບໍ່ຕ້ອງອາບັຕິ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕີຍກັນທ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑໔ ອນາປັຕຕິວາຣ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໒໓] ໑. ພິກສຸນີຂໍໂອກາສແລ້ວຈຶ່ງຖາມ
໒. ພິກສຸນີຂໍໂອກາສໂດຍບໍ່ໄດ້ເຈາະຈົງແລ້ວຈຶ່ງຖາມໃນປິດົກໃດປິດົກນຶ່ງ
໓. ພິກສຸນີວິກົລຈິຕ
໔. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໔ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑໙ ນິທານວັຕຖຸ

### ໙. ສັຕຕຸປາຫນວັຄ

### ສິກຂາບົດທີ ໑໙

ວ່າດ້ວຍການເຂົ້າຫມູ່ບ້ານໂດຍບໍ່ມີຜ້າຮັດຖັນ

### ເຣື້ອງພິກສຸນີຮູບນຶ່ງ

[໑໔໘໔] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຮາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ສມັຍນັ້ນ ພິກສຸນີຮູບນຶ່ງບໍ່ມີຜ້າຮັດຖັນເຂົ້າໄປບິນທບາຕໃນຫມູ່ບ້ານ ຂນະທີ່ທ່ານຍ່າງຢູ່ເທິງຖນົນລົມບ້າຫມູພັດເປີດສັງຂາຕິເອິກຂຶ້ນ ຄົນທັງຫລາຍສົ່ງສຽງວ່າ "ຖັນແລະທ້ອງຂອງແມ່ເຈົ້າສວຍຈິງ" ພິກສຸນີນັ້ນຖືກຄົນທັງຫລາຍເຍາະເຍີ້ຍຈຶ່ງເກີດເຂີນ ຄັນທ່ານໄປເຖິງທີ່ຢູ່ຈຶ່ງບອກເຣື້ອງນັ້ນໃຫ້ພິກສຸນີທັງຫລາຍຊາບ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພິກສຸນີບໍ່ມີຜ້າຮັດຖັນຈຶ່ງເຂົ້າໄປຫມູ່ບ້ານລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພິກສຸນີບໍ່ມີຜ້າຮັດຖັນເຂົ້າໄປຫມູ່ບ້ານ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພິກສຸນີບໍ່ມີຜ້າຮັດຖັນຈຶ່ງເຂົ້າໄປຫມູ່ບ້ານລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

### ພຣະບັນຍັດ

[໑໔໘໕] ກໍພິກສຸນີໃດບໍ່ມີຜ້າຮັດຖັນເຂົ້າຫມູ່ບ້ານ ຕ້ອງອາບັຕິປາຈິຕຕິຍ໌

ເລື່ອງພິກສຸນີຮູບນຶ່ງ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ໙. ສັຕຕຸປາຫນວັຄ ສິກຂາບົດທີ ໑໓ ອນາປັຕຕິວາຣ**

**ສິກຂາບົທວິພັງຄ໌**

[໑໔໖] ຄຳວ່າ ກໍ . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ກໍ . . ໃດ
ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້
ຄຳວ່າ ບໍ່ມີຜ້າຮັດຖັນ ຄື ເວັ້ນຜ້າຮັດຖັນ
ທີ່ຊື່ວ່າ ຜ້າຮັດຖັນ ໄດ້ແກ່ ຜ້າທີ່ໃຊ້ປົກປິດອວັຍວະໃຕ້ຮາກຂວັນລົງມາເຖິງສາຍບື
ຄຳວ່າ ເຂົ້າຫມູ່ບ້ານ ຄື ສຳລັບຫມູ່ບ້ານທີ່ມີຮົ້ວລ້ອມ ຍ່າງເລີຍເຂຕຮົ້ວລ້ອມ ຕ້ອງອາບັຕິປາຈິຕຕິຍ໌
ສຳລັບຫມູ່ບ້ານທີ່ບໍ່ມີຮົ້ວລ້ອມ ກ້າວພົ້ນອຸປຈາຣໄປ ຕ້ອງອາບັຕິປາຈິຕຕິຍ໌

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

[໑໔໗] ໑. ພິກສຸນີຖືກຊິງຈີວອນໄປ

໒. ພິກສຸນີຈີວອນຫາຍ

໓. ພິກສຸນີຜູ້ເປັນໄຂ້

໔. ພິກສຸນີຜູ້ຫລົງລືມ

໕. ພິກສຸນີບໍ່ຮູ້ຕົວ

໖. ພິກສຸນີວິກົລຈິຕ

໗. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໓ ຈົບ

ສັຕຕຸປາຫນວັຄທີ ໙ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໔. ປາຈິຕຕິຍກັນຫ໌] ບິທສຣຸປ

### ບິທສຣຸບ

ແມ່ເຈົ້າທັງຫລາຍ ທັມຄືປາຈິຕຕີຍ໌ ໑໖໖ ສິກຂາບົທ໑ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫລາຍໃນທັມຄືປາຈິຕຕີຍ໌ ໑໖໖ ສິກຂາບົທນັ້ນວ່າ "ທ່ານທັງຫລາຍຜູ້ບໍຣິສຸດທ໌ແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວຫລື" ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວໃນທັມຄືປາຈິຕຕີຍ໌ທັງ ໑໖໖ ສິກຂາບົທເຫລົ່ານີ້ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

ຂຸທທກສິກຂາບົທ ຈົບບໍຣິບູຣນ໌

ປາຈິຕຕິຍກັນຫ໌ໃນພິກຂຸນີວິພັງຄ໌ ຈົບ

**ໝາຍເຫດ :**

໑ ມຸສາວັគ ໑໐ ສິກຂາບົທ ມີເນື້ອຄວາມເຫມືອນກັບມຸສາວາທວັគຂອງພິກສຸສົງຂ໌
ພູຕຄາມວັគ ໑໐ ສິກຂາບົທ ມີເນື້ອຄວາມເຫມືອນກັບພູຕຄາມວັគຂອງພິກສຸສົງຂ໌
ໂພຊນວັគ ໑໐ ສິກຂາບົທ ສິກຂາບົດທີ ໑-໖ ມີເນື້ອຄວາມເຫມືອນກັບສິກຂາບົດທີ ໑,໒,໔,໗,໘,໑໐ ບ່ອນໂພຊນວັគຂອງພິກສຸສົງຂ໌ ສິກຂາບົດທີ ໗-໑໐ ມີເນື້ອຄວາມເຫມືອນກັບສິກຂາບົດທີ ໔-໕ ບ່ອນອເຈລກວັគຂອງພິກສຸສົງຂ໌
ຈາຣິຕວັគ ໑໐ ສິກຂາບົທ ສິກຂາບົດທີ ໑-໕ ມີເນື້ອຄວາມເຫມືອນກັບສິກຂາບົດທີ ໖-໑໐ ບ່ອນອເຈລກວັគຂອງພິກສຸສົງຂ໌ ສິກຂາບົດທີ ໖-໑໐ ມີເນື້ອຄວາມເຫມືອນກັບສິກຂາບົດທີ ໑-໕ ແຫ່ງສຸຣາປານວັគຂອງພິກສຸ
ໂຊຕິວັគ ໑໐ ສິກຂາບົທ ສິກຂາບົດທີ ໑-໕ ມີເນື້ອຄວາມເຫມືອນກັບສິກຂາບົດທີ ໖-໑໐ ບ່ອນສຸຣາປານວັគຂອງພິກສຸສົງຂ໌ ສິກຂາບົດທີ ໖-໑໐ ມີເນື້ອຄວາມເຫມືອນກັບສິກຂາບົດທີ ໑,໒,໓,໖,໘ ແຫ່ງສັປປານກວັគຂອງພິກສຸສົງຂ໌
ທິຕຖິວັគ ໑໐ ສິກຂາບົທ ສິກຂາບົດທີ ໑-໔ ມີເນື້ອຄວາມເຫມືອນກັບສິກຂາບົດທີ ໙-໑໐ ບ່ອນສັປປານກວັគຂອງພິກສຸສົງຂ໌ ສິກຂາບົດທີ ໓-໑໐ ມີເນື້ອຄວາມເຫມືອນກັບສິກຂາບົທທີ່

໑-໗ ບ່ອນສູຫາຫຼູຣຣມິກວັດຂອງພິກສຸສົງຂ໌ຫຼູຣຣມິກວັດ ໑໐ ສິກຂາບົທ ສິກຂາບົດທີ ໑-໔ ມີເນື້ອຄວາມເຫມືອນກັບສິກຂາບົດທີ ໙-໑໔ ບ່ອນສູຫາຫຼູຣຣມິກວັດຂອງພິກສຸສົງຂ໌ ສິກຂາບົດທີ ໕-໑໐ ມີເນື້ອຄວາມເຫມືອນກັບສິກຂາບົທທີ່ ໔,໔,໕,໖,໗,໑໐ ບ່ອນຣຕນວັດຂອງພິກສຸສົງຂ໌

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໕. ປາຕິເທສູນີຍກັນທ໌] ປາຕິເທສູນີຍສິກຂາບົດທີ ໑ ນິທານວັຕຖຸ

### ໕. ປາຕິເທສູນີຍກັນທ໌

ແມ່ເຈົ້າທັງຫລາຍ ຫຼັນຄືປາຕິເທສູນີຍະ ໗ ສິກຂາບົທເຫລົ່ານີ້ມາເຖີງອາຣະທີ່ຈະຍົກຂຶ້ນສູະແດງເປັນຂໍ້ໆຕາມລຳດັບ

### ປາຕິເທສູນີຍສິກຂາບົດທີ ໑

ວ່າດ້ວຍກາຣອອກປາກຂໍເນີຍໃສູ

### ເຣື້ອງພິກສຸນີສັພພັຄຄີຍ໌

[໑໔໗] ສູມັຍນັ້ນ ພຣະຜູ້ມີພຣະພາກພຸດຫຼະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສູດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພິກສຸນີສັພພັຄຄີຍ໌ອອກປາກຂໍເນີຍໃສູມາສັນ ຄົນທັງຫລາຍຈຶ່ງຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີຈຶ່ງອອກປາກຂໍເນີຍໃສູມາສັນ ໃຜລະຈະບໍ່ຊອບໃຈອາຫາຣທີ່ປຸງດີພ້ອມ ໃຜລະຈະບໍ່ຊອບຂອງແຊບ" ພິກສຸນີທັງຫລາຍໄດ້ຍິນຄົນພວກນັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງອອກປາກຂໍເນີຍໃສູມາສັນລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ອອກປາກຂໍເນີຍໃສູມາສັນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດຫຼະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດຫຼະ

ເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງອອກປາກຂໍເນີຍໃສ້ມາ ສົ້ນລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສ້ໃຫ້ເຫລື້ອມໃສ້ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສ້ຢູ່ແລ້ວໃຫ້ເຫລື້ອມໃສ້ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຮັບສັ່ງໃຫ້ ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໕. ປາຕິເທສນີຍກັນຫ໌] ປາຕິເທສນີຍສິກຂາບົດທີ ໑ ພຣະອນຸບັນຍັດ**

**ພຣະບັນຍັດ**

ກໍພິກສຸນີໃດອອກປາກຂໍເນີຍໃສ້ມາສັ້ນ ພິກສຸນີນັ້ນຄວນສະແດງຄືນວ່າ "ແມ່ເຈົ້າຂະນ້ອຍຕ້ອງທັມຄື ປາຕິເທສນີຍະເປັນທັມທີ່ນ່າຕິຕຽນ ບໍ່ເປັນສັປປາຍະ ຂະນ້ອຍຂໍສະແດງຄືນທັມນັ້ນ" ສິກຂາບົທນີ້ພຣະຜູ້ມີພຣະພາກຊົງບັນຍັດໄວ້ແກ່ພິກສຸນີທັງຫລາຍຢ່າງນີ້

ເຣື້ອງພິກສຸນີສັພພັຄຄີຍ໌ ຈົບ

**ເຣື້ອງພິກສຸນີເປັນໄຂ້**

[໑໘໔໙] ສັມັຍນັ້ນ ພິກສຸນີທັງຫລາຍເປັນໄຂ້ ພວກພິກສຸນີຜູ້ຖາມອາການໄຂ້ໄດ້ກ່າວກັບພິກສຸນີ ເຫລົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າ ພວກທ່ານຍັງສະບາຍດີຫລື ຍັງພໍເປັນຢູ່ໄດ້ຫລື" ພວກພິກສຸນີຜູ້ເປັນ ໄຂ້ກ່າວວ່າ "ແມ່ເຈົ້າ ເມື່ອກ່ອນພວກຂະນ້ອຍອອກປາກຂໍເນີຍໃສ້ມາສັ້ນໄດ້ ເພາະເຫຕຸນັ້ນ ພວກ ຂະນ້ອຍຈຶ່ງມີຄວາມຜາສຸກ ແຕ່ບັດນີ້ພວກຂະນ້ອຍຢ້ານເກງຢູ່ວ່າພຣະຜູ້ມີພຣະພາກຊົງຫ້າມ ຈຶ່ງບໍ່ກ້າ ອອກປາກຂໍ ເພາະເຫຕຸນັ້ນຈຶ່ງບໍ່ມີຄວາມຜາສຸກ" ພິກສຸທັງຫລາຍໄດ້ຂາບທູລພຣະຜູ້ມີພຣະພາກ ໃຫ້ຊົງຊາບ ຯລຯ

**ຊົງອນຸຍາຕເນີຍໃສ້**

ພຣະຜູ້ມີພຣະພາກຊົງອນຸຍາຕວ່າ "ພິກສຸທັງຫລາຍ ເຮົາອນຸຍາຕໃຫ້ພິກສຸນີຜູ້ເປັນໄຂ້ອອກປາກຂໍ ເນີຍໃສ້ມາສັ້ນໄດ້" ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະອນຸບັນຍັດ**

[໑໘໕໐] ອີກຢ່າງນຶ່ງ ພິກສຸນີໃດຜູ້ບໍ່ເປັນໄຂ້ອອກປາກຂໍເນີຍໃສ້ມາສັ້ນ ພິກສຸນີນັ້ນຄວນສະແດງ

ຄືນວ່າ "ແມ່ເຈົ້າ ຂະນ້ອຍຕ້ອງທຳມຄືປາຕິເທສນີຍະ ເປັນທຳມທີ່ນ່າຕິຕຽນບໍ່ເປັນສັປປາຍະ ຂະນ້ອຍຂອສະແດງຄືນທຳມນັ້ນ"

ເລື່ອງພິກສຸນີເປັນໄຂ້ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໕. ປາຕິເທສນີຍກັນທ໌] ປາຕິເທສນີຍສິກຂາບົດທີ ໑ ບົທພາຊນີຍ໌**

**ສິກຂາບົທວິພັງຄ໌**

[໑໔໓໑] ຄຳວ່າ ອີກຢ່າງນຶ່ງ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ອີກຢ່າງນຶ່ງ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຜູ້ບໍ່ເປັນໄຂ້ ຄື ຜູ້ຂາດເນີຍໃສກໍຍັງມີຄວາມຜາສຸກ

ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ຜູ້ຂາດເນີຍໃສຍ່ອມບໍ່ມີຄວາມຜາສຸກ

ທີ່ຊື່ວ່າ ເນີຍໃສ ໄດ້ແກ່ ເນີຍໃສທີ່ເກີດຈາກໂຄ ເນີຍໃສຈາກແພະ ເນີຍໃສຈາກກະບືຫລືເນີຍໃສຂອງສັຕວ໌ທີ່ມີຊີ້ນເປັນກັປປີຍະ

ພິກສຸນີບໍ່ເປັນໄຂ້ ຂໍເພື່ອປໂຍດຕົນ ຕ້ອງອາບັຕິທຸກກະຕະໃນຂນະທີ່ຂໍ ຮັບປະເຄນມາດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັຕິທຸກກະຕະເພາະໄດ້ມາ ທ່ານສັນ ຕ້ອງອາບັຕິປາຕິເທສນີຍະ ທຸກໆຄຳກືນ

**ບົທພາຊນີຍ໌**

**ຕິກປາຕິເທສນີຍະ**

[໑໔໓໔] ບໍ່ເປັນໄຂ້ ພິກສຸນີສຳຄັນວ່າບໍ່ເປັນໄຂ້ ອອກປາກຂໍເນີຍໃສມາສັນ ຕ້ອງອາບັຕິປາຕິເທສນີຍະ

ບໍ່ເປັນໄຂ້ ພິກສຸນີບໍ່ແນ່ໃຈ ອອກປາກຂໍເນີຍໃສມາສັນ ຕ້ອງອາບັຕິປາຕິເທສນີຍະ

ບໍ່ເປັນໄຂ້ ພິກສຸນີສຳຄັນວ່າເປັນໄຂ້ ອອກປາກຂໍເນີຍໃສມາສັນ ຕ້ອງອາບັຕິປາຕິເທສນີຍະ

**ທຸກທຸກກະຕະ**
ເປັນໄຂ້ ພິກຂຸນີສຳຄັນວ່າບໍ່ເປັນໄຂ້ ອອກປາກຂໍເນີຍໃສມາສັນ ຕ້ອງອາບັຕິທຸກກະຕະ
ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ອອກປາກຂໍເນີຍໃສມາສັນ ຕ້ອງອາບັຕິທຸກກະຕະ
ເປັນໄຂ້ ພິກຂຸນີສຳຄັນວ່າເປັນໄຂ້ ອອກປາກຂໍເນີຍໃສມາສັນ ບໍ່ຕ້ອງອາບັຕິ

**ພຣະວິນັຍປີດົກ ພິກຂຸນີວິພັງຄ໌ [໕. ປາຕິເທສນີຍກັນທ໌] ປາຕິເທສນີຍສິກຂາບົດທີ ໑ ອນາປັຕຕິວາຣ**

**ອນາປັຕຕິວາຣ**
ພິກຂຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື
[໑໔໓໓] ໑. ພິກຂຸນີຜູ້ເປັນໄຂ້
໔. ພິກຂຸນີເປັນໄຂ້ ອອກປາກຂໍມາ ຫາຍແລ້ວສັນ
໓. ພິກຂຸນີສັນເນີຍໃສທີ່ເຫລືອເດນຂອງພິກຂຸນີຜູ້ເປັນໄຂ້
໔. ພິກຂຸນີສັນເນີຍໃສຂອງຍາຕ
໕. ພິກຂຸນີສັນເນີຍໃສຂອງຄົນທີ່ປວາຣນາໄວ້
໖. ພິກຂຸນີອອກປາກຂໍເພື່ອຜູ້ອື່ນ
໗. ພິກຂຸນີຈ່າຍມາດ້ວຍຊັພຍ໌ຂອງຕົນ
໘. ພິກຂຸນີວິກົລຈິຕ
໙. ພິກຂຸນີຕົ້ນບັນຍັດ

ປາຕິເທສນີຍສິກຂາບົດທີ ໑ ຈົບ

**ພຣະວິນັຍປີດົກ ພິກຂຸນີວິພັງຄ໌ [໕. ປາຕິເທສນີຍກັນທ໌] ໔-໘. ທຸຕິຍາທິປາຕິເທສນີຍສິກຂາບົທນິທານວັຕຖຸ**

**ປາຕິເທສນີຍສິກຂາບົດທີ ໔-໘໑**
ວ່າດ້ວຍການອອກປາກຂໍນ້ຳມັນເປັນຕົ້ນ

## ເລື້ອງພິກສຸນີສັພພັຄຄີຍ໌

[໑໔໖໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖ ບິນທິກເສດຖີ ເຂຕກຸງສາວັດຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌(ອອກປາກຂໍນ້ຳມັນມາສັນ ຯລຯ ອອກປາກຂໍນ້ຳເຜິ້ງມາສັນ ຯລຯ ອອກປາກຂໍນ້ຳອ້ອຍມາສັນ ຯລຯ ອອກປາກຂໍປາມາສັນ ຯລຯ ອອກປາກຂໍຊີ້ນມາສັນ ຯລຯ ອອກປາກຂໍນົມສົດມາສັນຯລຯ) ອອກປາກຂໍນົມສົ້ມມາສັນ ຄົນທັງຫລາຍຈຶ່ງຕຳຫນິ ປະນາມ ໂພນທະນາວ່າ"ຈັ່ງໃດພວກພິກສຸນີຈຶ່ງອອກປາກຂໍນົມສົ້ມມາສັນລະ ໃຜລະຈະບໍ່ຊອບໃຈອາຫານທີ່ປຸງດີພ້ອມ ໃຜລະຈະບໍ່ຊອບໃຈຂອງທີ່ແຊບ" ພິກສຸນີທັງຫລາຍໄດ້ຍິນຄົນພວກນັ້ນຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງອອກປາກຂໍນົມສົ້ມມາສັນລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເລື້ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເລື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

## ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເລື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ອອກປາກຂໍນົມສົ້ມມາສັນ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍ ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງຂໍນົມສົ້ມມາສັນລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ໝາຍເຫດ :**

໑ ສິກຂາບົດທີ ໔ ວ່າດ້ວຍການອອກປາກຂໍນ້ຳມັນ ສິກຂາບົດທີ ໖ ວ່າດ້ວຍການອອກປາກຂໍນ້ຳເຜິ້ງ ສິກຂາບົດທີ ໔ ວ່າດ້ວຍການອອກປາກຂໍນ້ຳອ້ອຍ ສິກຂາບົດທີ ໕ ວ່າດ້ວຍການອອກປາກຂໍປາ ສິກຂາບົດທີ ໖ ວ່າດ້ວຍການອອກປາກຂໍຊີ້ນ ສິກຂາບົດທີ ໗ ວ່າດ້ວຍການອອກປາກຂໍນົມສົດຄວນຊາບວ່າລະຂໍ້ຄວາມເຕັມໄວ້ ທີ່ປາກົດຢູ່ນີ້ ເປັນຂໍ້ຄວາມຂອງສິກຂາບົດທີ ໗

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໕. ປາຕິເທສນີຍກັນຫ໌] ປາຕິເທສນີຍສິກຂາບົດທີ ໔-໗ ພຣະອນຸບັນຍັດ

### ພຣະບັນຍັດ

ກໍພິກສຸນີໃດອອກປາກຂໍນົມສົ້ມມາສັນ ພິກສຸນີນັ້ນຄວນສະແດງຄືນວ່າ "ແມ່ເຈົ້າຂະນ້ອຍຕ້ອງທັມຄືປາຕິເທສນີຍະ ເປັນທັມທີ່ນ່າຕິຕຽນ ບໍ່ເປັນສັປປາຍະ ຂະນ້ອຍຂໍສະແດງຄືນທັມນັ້ນ"
ສິກຂາບົດນີ້ພຣະຜູ້ມີພຣະພາກຊົງບັນຍັດໄວ້ແກ່ພິກສຸນີທັງຫລາຍຢ່າງນີ້

ເຣື່ອງພິກສຸນີສັພພັຄຄີຍ໌ ຈົບ

### ເຣື່ອງພິກສຸນີເປັນໄຂ້

[໑໔໓໕] ສມັຍນັ້ນ ພິກສຸທັງຫລາຍເປັນໄຂ້ ພິກສຸນີຜູ້ຖາມອາກາຣໄຂ້ໄດ້ກ່າວກັບພິກສຸນີເຫລົ່ານັ້ນດັ່ງນີ້ວ່າ "ແມ່ເຈົ້າ ພວກທ່ານຍັງສະບາຍດີຫລື ຍັງພໍເປັນຢູ່ໄດ້ຫລື" ພິກສຸນີຜູ້ເປັນໄຂ້ກ່າວວ່າ "ແມ່ເຈົ້າ ເມື່ອກ່ອນພວກຂະນ້ອຍອອກປາກຂໍນົມສົ້ມມາສັນໄດ້ ເພາະເຫຕຸນັ້ນພວກຂະນ້ອຍຈຶ່ງມີຄວາມຜາສຸກ ແຕ່ບັດນີ້ພວກຂະນ້ອຍຢ້ານເກງຢູ່ວ່າ 'ພຣະຜູ້ມີພຣະພາກຊົງຫ້າມ" ຈຶ່ງບໍ່ກ້າອອກປາກຂໍ ເພາະເຫຕຸນັ້ນຈຶ່ງບໍ່ມີຄວາມຜາສຸກ" ພວກພິກສຸໄດ້ຂາບທູລເຣື່ອງນີ້ໃຫ້ພຣະຜູ້ມີພຣະພາກຊົງຊາບ ຯລຯ

### ຊົງອນຸຍາຕນົມສົ້ມ

ພຣະຜູ້ມີພຣະພາກຊົງອນຸຍາຕວ່າ "ພິກສຸທັງຫລາຍ ເຣົາອນຸຍາຕໃຫ້ພິກສຸນີເປັນໄຂ້ອອກປາກຂໍນົມສົ້ມມາສັນໄດ້" ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

### ພຣະອນຸບັນຍັດ

[໑໔໓໖] ອີກຢ່າງນຶ່ງ ພິກສຸນີໃດຜູ້ບໍ່ເປັນໄຂ້ອອກປາກຂໍ (ນ້ຳມັນ ຯລຯ ນ້ຳເຜິ້ງ ຯລຯ ນ້ຳອ້ອຍ ຯລຯ ປາ ຯລຯ ຊີ້ນ ຯລຯ ນົມສົດ ຯລຯ) ນົມສົ້ມມາສັນ ພິກສຸນີນັ້ນຄວນສະແດງຄືນວ່າ "ແມ່ເຈົ້າຂະນ້ອຍຕ້ອງທັມຄືປາຕິເທສນີຍະ ເປັນທັມທີ່ນ່າຕິຕຽນ ບໍ່ເປັນສັປປາຍະ ຂະນ້ອຍຂອສະແດງຄືນທັມນັ້ນ"

ເຣື່ອງພິກສຸນີເປັນໄຂ້ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໕. ປາຕິເທສນີຍກັນຫ໌] ປາຕິເທສນີຍສິກຂາບົດທີ ໔-ກ ບົທພາຊນີຍ໌

### ສິກຂາບົທວິພັງຄ໌

[໑໔໓ກ] ຄຳວ່າ ອີກຢ່າງນຶ່ງ . . . ໃດ ຄື ຜູ້ໃດ ຜູ້ເຊັ່ນໃດ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຕຣັສວ່າ ອີກຢ່າງນຶ່ງ . . . ໃດ

ຄຳວ່າ ພິກສຸນີ ມີອະທິບາຍວ່າ ຊື່ວ່າພິກສຸນີ ເພາະເປັນຜູ້ຂໍ ຯລຯ ນີ້ທີ່ພຣະຜູ້ມີພຣະພາກຊົງປະສົງຄ໌ ເອົາວ່າ ພິກສຸນີ ໃນຄວາມຫມາຍນີ້

ທີ່ຊື່ວ່າ ຜູ້ບໍ່ເປັນໄຂ້ ຄື ຜູ້ຂາດນົມສົ້ມກໍຍັງມີຄວາມຜາສຸກ

ທີ່ຊື່ວ່າ ຜູ້ເປັນໄຂ້ ຄື ຜູ້ຂາດນົມສົ້ມຍ່ອມບໍ່ມີຄວາມຜາສຸກ

ທີ່ຊື່ວ່າ ນ້ຳມັນ ໄດ້ແກ່ ນ້ຳມັນທີ່ສະກັດຈາກເມັດງາ ນ້ຳມັນຈາກເມັດຜັກກາດ ນ້ຳມັນຈາກຜົລຫມາກຊາງ ນ້ຳມັນຈາກເມັດລະຫຸ່ງ ນ້ຳມັນຈາກແປວສັຕວ໌

ທີ່ຊື່ວ່າ ນ້ຳເຜິ້ງ ໄດ້ແກ່ ນ້ຳຣົສຫວານທີ່ເຜິ້ງທຳ

ທີ່ຊື່ວ່າ ນ້ຳອ້ອຍ ໄດ້ແກ່ ນ້ຳຣົສຫວານທີ່ເກີດຈາກອ້ອຍ

ທີ່ຊື່ວ່າ ປາ ພຣະຜູ້ມີພຣະພາກຕຣັສຫມາຍເຖິງສັຕວ໌ທີ່ເກີດໃນນ້ຳ

ທີ່ຊື່ວ່າ ຊີ້ນ ໄດ້ແກ່ ຊີ້ນຂອງສັຕວ໌ທີ່ມີມັງສະເປັນກັປປິຍະ

ທີ່ຊື່ວ່າ ນົມສົດ ໄດ້ແກ່ ນ້ຳນົມໂຄ ນ້ຳນົມແພະ ນ້ຳນົມກະບື ຫລືນ້ຳນົມສັຕວ໌ທີ່ມີມັງສະເປັນກັປປິຍະ

ທີ່ຊື່ວ່າ ນົມສົ້ມ ໄດ້ແກ່ ນົມສົ້ມຂອງສັຕວ໌ມີໂຄເປັນຕົ້ນເຫລົ່ານັ້ນແຫລະ

ພິກສຸນີບໍ່ເປັນໄຂ້ ຂໍມາເພື່ອຕົນ ຕ້ອງອາບັຕິທຸກກະຕະໃນຂະນະທີ່ຂໍ ຮັບປະເຄນໄວ້ດ້ວຍຕັ້ງໃຈວ່າ "ຈັກສັນ" ຕ້ອງອາບັຕິທຸກກະຕະເພາະໄດ້ມາ ທ່ານສັນຕ້ອງອາບັຕິປາຕິເທສນີຍະ ທຸກໆຄຳກືນ

### ບົທພາຊນີຍ໌

#### ຕິກປາຕິເທສນີຍະ

[໑໔໓ຂ] ບໍ່ເປັນໄຂ້ ພິກສຸນີສຳຄັນວ່າບໍ່ເປັນໄຂ້ ອອກປາກຂໍນົມສົ້ມມາສັນ ຕ້ອງອາບັຕິປາຕິເທສນີຍະ

ບໍ່ເປັນໄຂ້ ພິກສຸນີບໍ່ແນ່ໃຈ ອອກປາກຂໍນົມສົ້ມມາສັນ ຕ້ອງອາບັຕິປາຕິເທສນີຍະ

ບໍ່ເປັນໄຂ້ ພິກສຸນີສຳຄັນວ່າເປັນໄຂ້ ອອກປາກຂໍນົມສົ້ມມາສັນ ຕ້ອງອາບັຕິປາຕິເທສນີຍະ

**ທຸກກຸກກະຕະ**

ເປັນໄຂ້ ພິກຂຸນີສຳຄັນວ່າບໍ່ເປັນໄຂ້ ອອກປາກຂໍນົມສົ້ມມາສັນ ຕ້ອງອາບັຕິທຸກກະຕະ

ເປັນໄຂ້ ພິກຂຸນີບໍ່ແນ່ໃຈ ອອກປາກຂໍນົມສົ້ມມາສັນ ຕ້ອງອາບັຕິທຸກກະຕະ

ເປັນໄຂ້ ພິກຂຸນີສຳຄັນວ່າເປັນໄຂ້ ອອກປາກຂໍນົມສົ້ມມາສັນ ບໍ່ຕ້ອງອາບັຕິ

**ອນາປັຕຕິວາຣ**

ພິກຂຸນີຕໍ່ໄປນີ້ ບໍ່ຕ້ອງອາບັຕິ ຄື

[໑໔໖໐] ໑. ພິກຂຸນີຜູ້ເປັນໄຂ້

໔. ພິກຂຸນີຂໍໄດ້ມາເມື່ອຕອນເປັນໄຂ້ ສັນເມື່ອບໍ່ເປັນໄຂ້

໖. ພິກຂຸນີສັນນົມສົ້ມທີ່ເຫລືອເດນຂອງພິກຂຸນີໄຂ້

໔. ພິກຂຸນີສັນນົມສົ້ມຂອງຍາຕ

໕. ພິກຂຸນີສັນນົມສົ້ມຂອງຄົນທີ່ປວາຣນາໄວ້

໖. ພິກຂຸນີອອກປາກຂໍເພື່ອຜູ້ອື່ນ

໗. ພິກຂຸນີຈ່າຍມາດ້ວຍຊັພຍ໌ຂອງຕົນ

໘. ພິກຂຸນີວິກົລຈິຕ

໐. ພິກຂຸນີຕົ້ນບັນຍັດ

ປາຕິເທສນີຍສິກຂາບົດທີ ໘ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໕. ປາຕິເທສນີຍກັນຫ໌] ບົທສຣຸປ**

**ບົທສຣຸບ**

ແມ່ເຈົ້າທັງຫລາຍ ທັມຄືປາຕິເທສນີຍະ ໘ ສິກຂາບົທ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫລາຍໃນທັມຄືປາຕິເທສນີຍະ ໘ ສິກຂາບົທເຫລົ່ານັ້ນວ່າ “ທ່ານທັງຫລາຍຜູ້ບໍຣິສຸດທ໌ແລ້ວຫລື” ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ “ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວຫລື” ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ “ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວຫລື” ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວໃນທັມຄືປາຕິເທສນີຍະທັງ ໘ ສິກຂາບົທເຫລົ່ານີ້ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

ປາຕິເທສນີຍກັນຫ໌ໃນພິກຂຸນີວິພັງຄ໌ ຈົບ

## ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໘. ເສຂິຍກັນຫ໌] ໑. ປຣິມັນທລວັຄ ສິກຂາບົດທີ ໑ ນິທານວັຕຖຸ

### ໘. ເສຂິຍກັນຫ໌

ແມ່ເຈົ້າທັງຫລາຍ ທັມຄືເສຂິຍະເຫລົ່ານີ້ມາເຖິງອາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ໆ ຕາມລຳດັບ

### ໑. ປຣິມັນທລວັຄ

ຫມວດວ່າດ້ວຍການນຸ່ງຫົ່ມຮຽບຮ້ອຍ

### ສິກຂາບົດທີ ໑
### ເຣື່ອງພິກສຸນີສັພພັຄຄີຍ໌

[໑໒໔໐] ສມັຍນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ຄອງອັນຕຣວາສົກຍ້ອຍຂ້າງຫນ້າແດ່ ຂ້າງຫລັງແດ່ ພວກຊາວບ້ານພາກັນຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດພວກພິກສຸນີທັງຫລາຍຈຶ່ງຄອງອັນຕຣວາສົກຍ້ອຍຂ້າງຫນ້າແດ່ ຂ້າງຫລັງແດ່ເຫມືອນຍິງຄຣືຫັສຖ໌ຜູ້ບໍຣິໂພຄກາມລະ" ພິກສຸນີທັງຫລາຍໄດ້ຍິນພວກຊາວບ້ານຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງຄອງອັນຕຣວາສົກຍ້ອຍຂ້າງຫນ້າແດ່ ຍ້ອຍຂ້າງຫລັງແດ່ລະ" ຄັນແລ້ວ ພິກສຸນີເຫລົ່ານັ້ນໄດ້ນຳເຣື່ອງນີ້ໄປບອກພິກສຸທັງຫລາຍໃຫ້ຊາບ ພວກພິກສຸໄດ້ນຳເຣື່ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

### ຊົງປະຊຸມສົງຂ໌ບັນຍັດສິກຂາບົທ

ລຳດັບນັ້ນ ພຣະຜູ້ມີພຣະພາກຣັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື່ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ຄອງອັນຕຣວາສົກຍ້ອຍຂ້າງຫນ້າແດ່ ຂ້າງຫລັງແດ່ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ຈິງພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງຄອງອັນຕຣວາສົກຍ້ອຍຂ້າງຫນ້າແດ່ ຂ້າງຫລັງແດ່ລະ ພິກສຸທັງຫລາຍ ການກະທຳຢ່າງນີ້ ບໍ່ໄດ້ເຮັດ

ໃຫ້ດິນທີ່ຍັງບໍ່ເປລື້ອນໃສຼໃຫ້ເປລື້ອນໃສ ຫລືເຮັດໃຫ້ດິນທີ່ເປລື້ອນໃສຼຢູ່ແລ້ວໃຫ້ເປລື້ອນໃສຼ ຍິ່ງຂຶ້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົດນີ້ຂຶ້ນສະແດງດັ່ງນີ້

**ພຣະບັນຍັດ**

ຄວນທຳຄວາມສຳນຶກວ່າ ເຮົາຈັກຄອງອັນຕຣວາສົກໃຫ້ຮຽບຮ້ອຍ

ເຣື້ອງພິກສຸນີສັພພັຄຄີຍ໌ ຈົບ

**ສິກຂາບົດວິພັງຄ໌**

ພິກສຸນີຄວນຄອງອັນຕຣວາສົກໃຫ້ຮຽບຮ້ອຍ ຄືນຸ່ງປົດບໍຣິເວນສາຍບື ບໍຣິເວນເຂົ່າ ພິກສຸນີໃດບໍ່ເອື້ອເຟື້ອ ຄອງອັນຕຣວາສົກຍ້ອຍຂ້າງໜ້າຫລືຂ້າງຫລັງ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

໑. ພິກສຸນີບໍ່ຈົງໃຈ
໒. ພິກສຸນີບໍ່ມີສະຕິ
໓. ພິກສຸນີຜູ້ບໍ່ຮູ້
໔. ພິກສຸນີຜູ້ເປັນໄຂ້
໕. ພິກສຸນີຜູ້ມີເຫດຸຂັດຂ້ອງ
໖. ພິກສຸນີວິກົລຈິຕ
໗. ພິກສຸນີຕົ້ນບັນຍັດ

ເປັນຂໍ້ຄວາມທີ່ຫຍໍ້ໄວ້໑

**ໝາຍເຫດ :**

໑ ເສຂິຍສິກຂາບົດທີ່ເຫລືອເປັນສາທາຣະນະບັນຍັດ ຄືສິກຂາບົດທີ່ຊົງບັນຍັດທົ່ວໄປທັງແກ່ພິກສຸ ແລະພິກສຸນີ ຄວນຊາບໂດຍນັຍທີ່ສະແດງໄວ້ໃນພິກຂຸວິພັງຄ໌ ພຣະໄຕຣປີດົກເຫລັ້ມ ໒ ທ່ານລະຂໍ້ ຄວາມວັຄເຫລົ່ານີ້ ຄື (໒) ອຸຊຸຊັຄຊິກວັຄ (໓) ຂັມພກຕວັຄ (໔) ສັກກັຈຈວັຄ (໕) ກພລວັຄ (໖) ສຸຣຸສຸຣຸວັຄ ຄວນຊາບວ່າ ໃນເສຂິຍກັນທ໌ທັງຂອງພິກສຸສົງຄ໌ແລະພິກສຸນີສົງຄ໌ ມີຈຳນວນວັຄ

ແລະສິກຂາບົທເທົ່າກັນ (ດູ ວິນັຍປິດົກແປລ ໔/໕໗໖-໖໕໔/໖໔໙-໗໖໙)

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໖. ເສຂິຍກັນຫ໌] ໗. ປາທຸກາວັຄ ສິກຂາບົດທີ ໑ ນິທານວັຕຖຸ**

**໗. ປາທຸກາວັຄ**

ຫມວດວ່າດ້ວຍເກີບ

**ສິກຂາບົດທີ ໑**

**ເຣື້ອງພິກສຸນີສັພພັຄຄີຍ໌**

[໑໔໔໑] ສມັຍນັ້ນພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ ນະ ພຣະເຊຕວັນ ອາຣາມຂອງອນາຖບິນທິກເສດຖີ ເຂຕກຸງສາວັຕຖີ ຄັ້ງນັ້ນ ພວກພິກສຸນີສັພພັຄຄີຍ໌ຖ່າຍອຸຈຈາຣະແດ່ ປັສສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳ ພວກຊາວບ້ານຈຶ່ງຕຳຫນິ ປະນາມໂພນທະນາວ່າ "ຈັ່ງໃດພິກສຸນີທັງຫລາຍຈຶ່ງຖ່າຍອຸຈຈາຣະແດ່ ປັສສາວະແດ່ ບ້ວນນ້ຳລາຍແດ່ລົງໃນນ້ຳເຫມືອນຍິງຄຶຫັສຖ໌ຜູ້ບໍຣິໂພຄການລະ" ພິກສຸນີທັງຫລາຍໄດ້ຍິນພວກຊາວບ້ານຕຳຫນິ ປະນາມ ໂພນທະນາ ບັນດາພິກສຸນີຜູ້ມັກນ້ອຍ ຯລຯ ພາກັນຕຳຫນິ ປະນາມ ໂພນທະນາວ່າ "ຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງຖ່າຍອຸຈຈາຣະແດ່ ປັສສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳລະ" ຄັນແລ້ວພິກສຸນີເຫລົ່ານັ້ນໄດ້ນຳເຣື້ອງນີ້ໄປບອກໃຫ້ພິກສຸທັງຫລາຍໃຫ້ຊາບ ພວກພິກສຸຈຶ່ງນຳເຣື້ອງນີ້ໄປຂາບທູລພຣະຜູ້ມີພຣະພາກໃຫ້ຊົງຊາບ

**ຊົງປະຊຸມສົງຂ໌ບັນຍັດສິກຂາບົທ**

ລຳດັບນັ້ນ ພຣະຜູ້ມີພຣະພາກຮັບສັ່ງໃຫ້ປະຊຸມສົງຂ໌ເພາະເຣື້ອງນີ້ເປັນຕົ້ນເຫຕຸ ຊົງສອບຖາມພິກສຸທັງຫລາຍວ່າ "ພິກສຸທັງຫລາຍ ຊາບວ່າ ພວກພິກສຸນີສັພພັຄຄີຍ໌ຖ່າຍອຸຈຈາຣະແດ່ ປັສສາວະແດ່ ບ້ວນນ້ຳລາຍແດ່ລົງໃນນ້ຳ ແມ່ນແທ້ບໍ" ພິກສຸທັງຫລາຍທູລຮັບວ່າ "ແມ່ນແທ້ພຣະພຸດທະເຈົ້າຂ້າ" ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳຫນິວ່າ "ຯລຯ ພິກສຸທັງຫລາຍຈັ່ງໃດພວກພິກສຸນີສັພພັຄຄີຍ໌ຈຶ່ງຖ່າຍອຸຈຈາຣະແດ່ ປັສສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳລະ ພິກສຸທັງຫລາຍ ກາຣກະທຳຢ່າງນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫລື້ອມໃສໃຫ້ເຫລື້ອມໃສ ຫລືເຮັດໃຫ້ຄົນທີ່ເຫລື້ອມໃສຢູ່ແລ້ວໃຫ້ເຫລື້ອມໃສຍິ່ງຂື້ນໄດ້ເລີຍ ຯລຯ" ແລ້ວຈຶ່ງຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂື້ນສະແດງດັ່ງນີ້

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [ຝ. ເສຂິຍກັນຫ໌] ໗. ປາທຸກາວັຄ ສິກຂາບົດທີ ໑ ອນາປັຕຕິວາຣ**

**ພຣະບັນຍັດ**

ຄວນທຳຄວາມສຳນຶກວ່າ ເຮົາຈັກບໍ່ຖ່າຍອຸຈຈາຣະ ປັສສາວະ ຫລືບ້ວນນ້ຳລາຍລົງໃນນ້ຳ
ສິກຂາບົທນີ້ພຣະຜູ້ມີພຣະພາກຊົງບັນຍັດໄວ້ແກ່ພິກສຸນີທັງຫລາຍຢ່າງນີ້

ເຣື່ອງພິກສຸນີສັພພັຄຄີຍ໌ ຈົບ

**ເຣື້ອງພິກສຸນີເປັນໄຂ້**

ສມັຍນັ້ນ ພິກສຸນີທັງຫລາຍຜູ້ເປັນໄຂ້ ຢຳເກງຢູ່ທີ່ຈະຖ່າຍອຸຈຈາຣະແດ່ ປັສສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳ ພວກພິກສຸໄດ້ຂາບທູລເຣື້ອງນັ້ນໃຫ້ພຣະຜູ້ມີພຣະພາກຊົງຊາບ ພຣະຜູ້ມີພຣະພາກຊົງອນຸຍາຕວ່າ "ພິກສຸທັງຫລາຍ ເຮົາອນຸຍາຕໃຫ້ພິກສຸນີຜູ້ເປັນໄຂ້ຖ່າຍອຸຈຈາຣະແດ່ ປັສສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳໄດ້" ແລ້ວຮັບສັ່ງໃຫ້ພິກສຸນີທັງຫລາຍຍົກສິກຂາບົທນີ້ຂຶ້ນສະແດງດັ່ງນີ້

**ພຣະອນຸບັນຍັດ**

ຄວນທຳຄວາມສຳນຶກວ່າ ເຮົາບໍ່ເປັນໄຂ້ ຈັກບໍ່ຖ່າຍອຸຈຈາຣະ ປັສສາວະຫລືບ້ວນນ້ຳລາຍລົງໃນນ້ຳ

ເຣື້ອງພິກສຸນີເປັນໄຂ້ ຈົບ

**ສິກຂາບົທວິພັງຄ໌**

ພິກສຸນີບໍ່ເປັນໄຂ້ ບໍ່ຄວນຖ່າຍອຸຈຈາຣະ ປັສສາວະ ຫລືບ້ວນນ້ຳລາຍລົງໃນນ້ຳ
ພິກສຸນີໃດບໍ່ເອື້ອເຟື້ອ ບໍ່ເປັນໄຂ້ ຖ່າຍອຸຈຈາຣະ ປັສສາວະ ຫລືບ້ວນນ້ຳລາຍ ລົງໃນນ້ຳ ຕ້ອງອາບັຕິທຸກກະຕະ

**ອນາປັຕຕິວາຣ**

ພິກສຸນີຕໍ່ໄປນີ້ບໍ່ຕ້ອງອາບັຕິ ຄື

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໖. ເສຂິຍກັນຫ໌] ບົທສຣຸປ**

໑. ພິກສຸນີບໍ່ຈິງໃຈ

໒. ພິກສຸນີບໍ່ມີສຕິ

໓. ພິກສຸນີຜູ້ບໍ່ຮູ້

໔. ພິກສຸນີຜູ້ເປັນໄຂ້

໕. ພິກສຸນີຖ່າຍເທິງບົກແລ້ວໄຫລລົງນ້ຳ

໖. ພິກສຸນີຜູ້ມີເຫຕຸຂັດຂ້ອງ

໗. ພິກສຸນີວິກົລຈິຕ

໘. ພິກສຸນີມີຈິຕປັ່ນປ່ວງ

໙. ພິກສຸນີກະວົນກະວາຍເພາະເວທນາ

໑໐. ພິກສຸນີຕົ້ນບັນຍັດ

ສິກຂາບົດທີ ໑໕ ຈົບ

ປາທຸກາວັຄທີ ໗ ຈົບ

**ບົທສຣຸບ**

ແມ່ເຈົ້າທັງຫລາຍ ຫົມຄືເສຂິຍທັງຫລາຍຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫລາຍ ໃນຫົມຄືເສຂິຍະເຫລົ່ານັ້ນວ່າ "ແມ່ເຈົ້າ ທັງຫລາຍບໍຣິສຸດຫຼໍແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດຫຼໍແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໓ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດຫຼໍແລ້ວຫລື" ແມ່ເຈົ້າທັງຫລາຍບໍຣິສຸດຫຼໍແລ້ວໃນຫົມຄືເສຂິຍະເຫລົ່ານີ້ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນໄວ້ເປັນມະຕິຢ່າງນີ້

ເສຂິຍກັນຫ໌ ຈົບ

**ພຣະວິນັຍປິດົກ ພິກຂຸນີວິພັງຄ໌ [໗. ອທິກຣນສມຖະ] ບົທສຣຸປ**

**ຖ. ອຫິກຣຄນສົມຖະ**

ແມ່ເຈົ້າທັງຫລາຍ ທັມຄືອຫິກຣຄນສົມຖະ ຖ ເຫລົ່ານີ້ມາເຖິງອາຣະທີ່ຈະຍົກຂຶ້ນສະແດງເປັນຂໍ້ໆ ຕາມລຳດັບ

[໑໔໔໔] ເພື່ອຣະງັບອຫິກຣນ໌(ບັນຫາຂອງສົງຂ໌)ທີ່ເກີດຂຶ້ນແລ້ວໆ(໑) ຄວນໃຫ້ສັມມຸຂາວິນັຍ (໒) ຄວນໃຫ້ສຕິວິນັຍ (ລ) ຄວນໃຫ້ອມູຣຫວິນັຍ (໔) ຄວນໃຫ້ປະຕິຍານຕກຣນະ (໕) ຄວນໃຫ້ເຍພຸຍຍສິກາ (໖) ຄວນໃຫ້ຕັສສປາປີຍສິກາ (ຖ) ຄວນໃຫ້ຕິນວັຕຖາຣກວິນັຍ໑

**ບົທສຣຸບ**

ແມ່ເຈົ້າທັງຫລາຍ ທັມຄືອຫິກຣຄນສົມຖະ ຖ ຢ່າງ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຂ້າພະເຈົ້າຂໍຖາມແມ່ເຈົ້າທັງຫລາຍໃນທັມຄືອຫິກຣຄນສົມຖະເຫລົ່ານັ້ນວ່າ "ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ໒ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວຫລື" ຂ້າພະເຈົ້າຂໍຖາມເປັນຄັ້ງທີ ລ ວ່າ "ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວຫລື" ແມ່ເຈົ້າທັງຫລາຍບໍຣິສຸດທ໌ແລ້ວໃນທັມຄືອຫິກຣຄນສົມຖະ ຖ ເຫລົ່ານີ້ ເພາະສະນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິຢ່າງນີ້

**ອຫິກຣຄນສະມະນະ ຈົບ**

**ໝາຍເຫດ :**

໑ ສັມມຸຂາວິນັຍ ວິທີຕັດສິນໃນທີ່ພ້ອມໜ້າສົງຂ໌ ພ້ອມໜ້າບຸຄຄົລ ພ້ອມໜ້າວັຕຖຸ ແລະພ້ອມໜ້າທັມ ສຕິວິນັຍ ວິທີຕັດສິນໂດຍປະກາດສົມມຸດໃຫ້ວ່າເປັນພຣະອຣິຍະຜູ້ມີສຕິສົມບູນ ອມູຣຫວິນັຍ ວິທີຕັດສິນໂດຍຍກປໂຍດໃຫ້ ວ່າຕ້ອງອາບັຕິໃນຂນະເປັນບ້າ ປະຕິຍານຕກຣນະ ວິທີຕັດສິນຕາມຄຳຮັບຂອງຈຳເລີຍ ເຍພຸຍຍສິກາ ວິທີຕັດສິນຕາມສຽງຂ້າງມາກ ຕັສສປາປີຍສິກາ ວິທີຕັດສິນໂດຍກາຣລົງໂທສແກ່ຜູ້ທຳຜິດ ຕິນວັຕຖາຣກະ ວິທີຕັດສິນໂດຍກາຣປຣະນີປຣະນອມ ອຫິກຣນ໌ (ບັນຫາຂອງສົງຂ໌) ໔ ປະກາຣຣະງັບດ້ວຍອຫິກຣຄນສະມະນະແຕ່ລະຢ່າງ ຄື ວິວາທາຫິກຣນ໌ ຣະງັບດ້ວຍສັມມຸຂາວິນັຍແລະເຍພຸຍຍສິກາ ອນຸວາທາຫິກຣນ໌ ຣະງັບດ້ວຍສັມມຸຂາວິນັຍແລະເຍພຸຍຍສິກາ ອາປັຕຕາຫິກຣນ໌ ຣະງັບດ້ວຍສັມມຸຂາວິນັຍປະຕິຍານຕກຣນະ ແລະຕິນວັຕຖາຣກະ ກິຈຈາຫິກຣນ໌ ຣະງັບດ້ວຍສັມມຸຂາວິນັຍ (ກຽຂາ. ອ. ລລຖ໘-ລລລ໐ ໘ ອງ. ທຸກ. ໒໐/໒໐໑-໒໐ລ/໑໔ລ)

## ຄຳນິຄົມ

## ຄຳນິຄົມ

ແມ່ເຈົ້າທັງຫລາຍ ນິທານ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ ຄື
ຫມູ່ ຄື ປາຣາຊິກ ໘ ສິກຂາບົທ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ
ຫມູ່ ຄື ສັງຂາທິເສສ ໑໗ ສິກຂາບົທ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ
ຫມູ່ ຄື ນິສສັຄຄິຍປາຈິຕຕີຍ໌ ໓໐ ສິກຂາບົທ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ
ຫມູ່ ຄື ປາຈິຕຕີຍ໌ ໑໖໖ ສິກຂາບົທ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ
ຫມູ່ ຄື ປາຕິເທສນີຍະ ໘ ສິກຂາບົທ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ
ຫມູ່ ຄື ເສຂິຍະທັງຫລາຍ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ
ຫມູ່ ຄື ອທິກຣນສມຖະ ໗ ຂ້າພະເຈົ້າຍົກຂຶ້ນສະແດງແລ້ວ
ສິກຂາບົທຂອງພຣະຜູ້ມີພຣະພາກນັ້ນມີເທົ່ານີ້ມາໃນສູດຣ໑ ນັບເນື່ອງໃນພຣະສູດຣ ມາສູ່ອຸເທດທີ່ຈະຄວນຍົກຂຶ້ນສະແດງເປັນຂໍ້ໆຕາມລຳດັບທຸກເຄິ່ງເດືອນ ພວກເຮົາທັງຫມົດຄວນພ້ອມພຽງກັນ ຮ່ວມໃຈກັນ ບໍ່ວິວາທກັນ ສຶກສາໃນພຣະສູດຣນັ້ນເທອຍ

ພິກສຸນີວິພັງຄ໌ ຈົບ

**ໝາຍເຫດ :**

໑ ຄຳວ່າ "ພຣະສູດຣ" ຫມາຍເຖິງພຣະປາຕິໂມກຂ໌ນັ້ນເອງ (ດູ ວິ. ອ. ໑/໔໕/໔໘-໔໕໐)

**ພຣະໄຕຣປິດົກເຫລັ້ມທີ 0໓ ວິນັຍປິດົກທີ 0໓ ພິກຂຸນີວິພັງຄ໌ ຈົບ**